# にほんご

## ສຳລັບຊັ້ນມັດທະຍົມສຶກສາ ປີທີ 2





**執筆編集：**
マライカム・サヤコン
ラオス国立大学文学部日本語学科

内田　ナナ
吉川　景子
相馬森　佳奈
国際交流基金

**ຂຽນ ແລະ ຮຽບຮຽງ:**
**ປອ. ມະໄລຄຳ ໄຊຍະກອນ**
ພາກວິຊາພາສາຍີ່ປຸ່ນ, ຄະນະອັກສອນສາດ,
ມະຫາວິທະຍາໄລແຫ່ງຊາດ

**ອຸຈິດະ ນະນະ (UCHIDA Nana)**
**ໂຢະຊິກະວະ ເຄໂກະ (YOSHIKAWA Keiko)**
**ອະອິບະໂມະລິ ຄະນະ (AIBAMORI Kana)**
ຜູ້ຊ່ຽວຊານມູນນິທິຍີ່ປຸ່ນ

**校正：**
カンパン・ピムシーパソム
ラオス教育スポーツ省教育科学研究所副所長

ミーサイ・スックチャルーン
ラオス国立大学文学部日本語学科学科長

**ກວດແກ້:**
**ຄຳພັນ ພິມສີປະສົມ**
ຮອງຜູ້ອຳນວຍການສະຖາບັນຄົ້ນຄວ້າວິທະຍາສາດການສຶກສາ
**ມີໄຊ ສຸກຈະເລີນ**
ຫົວໜ້າພາກວິຊາພາສາຍີ່ປຸ່ນ, ຄະນະອັກສອນສາດ, ມະຫາວິທະຍາໄລແຫ່ງຊາດ

デザイン・レイアウト：
コンサワン・チャンタヴィサイ
ラオス教育スポーツ省教育科学研究所

**ເຂົ້າໜ້າ ແລະ ອອກແບບໜ້າປົກ:**
**ຄອນສະຫວັນ ຈັນທະວີໄຊ**
ຮັກສາການຮອງຫົວໜ້າຂະແໜງພາສາຝຣັ່ງ ແລະ ພາສາຕ່າງປະເທດອື່ນໆ, ສະຖາບັນຄົ້ນຄວ້າວິທະຍາສາດການສຶກສາ

イラスト：
シーラパットソン・チャンタラシー
国立美術学校

**ຮູບພາບ:**
**ສີຣະພັດສອນ ຈັນທະຣາສີ**
ສະຖາບັນວິຈິດສິນແຫ່ງຊາດ

**ラオス語翻訳：**
モンペット・カンタヴォンサイ
ラオス日本センター

**ຜູ້ແປພາສາລາວ:**
**ພອນເພັດ ຂັນທະວົງໄຊ**
ສະຖາບັນລາວ-ຍີ່ປຸ່ນ



ກະຊວງສຶກສາທິການ ແລະ ກິລາ
ສະຖາບັນຄົ້ນຄວ້າວິທະຍາສາດການສຶກສາ
2018

## ຄຳນຳ

ປຶ້ມແບບຮຽນພາສາຍີ່ປຸ່ນ ເຫຼັ້ມທີ 2 ນີ້ ແມ່ນພັດທະນາຕໍ່ເນື່ອງຈາກ ເຫຼັ້ມທີ 1 ເພື່ອນຳໃຊ້ເຂົ້າໃນການສອນ-ການຮຽນພາສາຍີ່ປຸ່ນ ຊັ້ນມັດທະຍົມ ປີທີ 2. ການພັດທະນາປຶ້ມແບບຮຽນນີ້ແມ່ນຕອບສະໜອງກັບການປະຕິຮູບການສຶກສາສາຍສາມັນໃໝ່ທີ່ກະຊວງສຶກສາທິການ ແລະ ກິລາມີນະໂຍບາຍເອົາພາສາອັງກິດເປັນພາສາຕ່າງປະເທດທີ 1 ແລະ ພາສາອື່ນໆເປັນພາສາຕ່າງປະເທດທີ 2 ເຂົ້າໃນຫຼັກສູດ. ປຶ້ມນີ້ໄດ້ພັດທະນາຂຶ້ນມາຕາມຄວາມຮຽກຮ້ອງຕ້ອງ ການຂອງສັງຄົມ ແລະ ເສດຖະກິດພາຍໃນປະເທດ. ພາສາຍີ່ປຸ່ນແມ່ນພາສາໜຶ່ງຊຶ່ງເປັນທີ່ຕ້ອງການຂອງສັງຄົມ ແລະ ການພັດທະນາເສດຖະກິດພາຍໃນປະເທດ. ສະນັ້ນ, ສະຖາບັນຄົ້ນຄວ້າວິທະຍາສາດການສຶກສາ ແລະ ມູນນິທິຍີ່ປຸ່ນ (The Japan Foundation) ຈຶ່ງໄດ້ຮ່ວມມືກັນພັດທະນາຂຶ້ນເພື່ອໃຫ້ນັກຮຽນລາວໄດ້ມີໂອກາດຮຽນພາສາຍີ່ປຸ່ນ ສາມາດສື່ສານ ແລະ ສຶກສາຕໍ່ໃນລະດັບສູງຂຶ້ນໄປ.

ປຶ້ມເຫຼັ້ມນີ້ ແມ່ນແນໃສ່ຮັບໃຊ້ການສອນ-ການຮຽນພາສາຍີ່ປຸ່ນໃນຊັ້ນ ມ.2. ຈຸດປະສົງ ເພື່ອໃຫ້ນັກຮຽນສາມາດອ່ານອອກສຽງຕົວອັກສອນໄດ້ທັງສອງຊະນິດ (Hiragana, Kata-kana) ໂດຍໃຊ້ຕົວອັກສອນໂຣມາຈິ (ອັກສອນໂຣມັນ) ເປັນຕົວພາອ່ານເພື່ອກຽມຄວາມພ້ອມສູ່ການຮຽນຕົວອັກສອນ Kanji. ການອອກແບບພັດທະນາປຶ້ມເຫຼັ້ມນີ້ແມ່ນຕໍ່ຈາກອັນງ່າຍດາຍທີ່ໄດ້ຮຽນໃນຊັ້ນມັດທະຍົມ ປີທີ 1 ໄປສູ່ສິ່ງທີ່ຍາກຂຶ້ນເລື້ອຍໆຕາມຄວາມເໝາະສົມກັບຊັ້ນຮຽນຂອງນັກຮຽນ. ປຶ້ມແບບຮຽນເຫຼັ້ມນີ້ສຳເລັດໄດ້ກໍຍ້ອນການໃຫ້ຄວາມຮ່ວມມືຈາກຫຼາຍທ່ານທີ່ມາຈາກຫຼາຍພາກສ່ວນ. ສະນັ້ນ, ສະຖາບັນຄົ້ນຄວ້າວິທະຍາສາດການສຶກສາ ຈຶ່ງຂໍສະແດງຄວາມຂອບໃຈມາຍັງທຸກໆທ່ານທີ່ໄດ້ສະໜັບສະໜູນ ແລະ ໃຫ້ການຮ່ວມມືໃນການຮຽບຮຽງປຶ້ມເຫຼັ້ມນີ້ຈົນສຳເລັດ ພ້ອມທີ່ຈະນຳໃຊ້ໃນການສອນ-ການຮຽນພາສາຍີ່ປຸ່ນໃນຊັ້ນມັດທະຍົມ ປີທີ 2 ຂອງລາວ.

ເຖິງຢ່າງໃດກໍຕາມ, ປຶ້ມແບບຮຽນເຫຼັ້ມນີ້ອາດຈະຍັງມີຄວາມຂາດຕົກບົກພ່ອງຊຶ່ງຄະນະພັດທະນາປຶ້ມແບບຮຽນບໍ່ສາມາດຈະເຫັນໄດ້ທັງໝົດ. ດ້ວຍເຫດນັ້ນ, ເມື່ອຄູ ແລະ ນັກຮຽນ ໄດ້ນຳໃຊ້ຕົວຈິງຫາກພົບເຫັນ ຂໍໃຫ້ທ່ານສົ່ງຂ່າວໄປຫາສະຖາບັນຄົ້ນຄວ້າວິທະຍາສາດການສຶກສາເພື່ອຈະໄດ້ປັບປຸງໃຫ້ສົມບູນຂຶ້ນໃນການຈັດພິມຄັ້ງຕໍ່ໄປ.

ສະຖາບັນຄົ້ນຄວ້າວິທະຍາສາດການສຶກສາ

# はじめに

この『にほんご２』は、中学２年生用の教科書として、『にほんご１』に続いて開発されました。この教科書は、教育スポーツ省が英語を第一外国語、他の言語を第二外国語としてカリキュラムに導入する方針を出した普通教育改革を受けて開発されたものです。また、日本語は社会や国内の経済発展に求められる言語のひとつで、この教科書は、その需要にも応えるものです。ラオスの生徒の皆さんが日本語を学習する機会を得て、コミュニケーションでき、より高いレベルの学習につなげられるよう、教育科学研究所と国際交流基金が協力して、この教科書を作成しました。

中学２年生の授業では、漢字の学習に入る前の準備として、ローマ字による読み方の補助があれば、ひらがなとカタカナの２種類の文字を読んで、発話できるようになることを目指しています。また、学年に合わせて、中学１年生で勉強したやさしい内容から、少しずつ難しい内容へ発展していくように設計されています。この教科書が完成したのは、さまざまな部門の多くの方々のご協力のおかげです。この教科書の編集にご支援、ご協力くださった皆さまに、教育科学研究所よりお礼を申し上げます。

しかし、この教科書には、教科書作成委員会が気付いていない不備があるかもしれません。教師や生徒の皆さんが実際に使ってみて、不備を見つけた場合は、次回印刷するときに修正しますので、教育科学研究所にお知らせください。

教育科学研究所

## ຄວາມເຫັນ

ພວກຂ້າພະເຈົ້າມີຄວາມຍິນດີຢ່າງຍິ່ງທີ່ໄດ້ພັດທະນາປຶ້ມແບບຮຽນພາສາຍີ່ປຸ່ນ “ນິຮົງໂກະ 2” ໃຫ້ແກ່ບັນດານ້ອງນັກຮຽນລາວ ຊັ້ນມັດທະຍົມສຶກສາ.

ບັນດານ້ອງນັກຮຽນທີ່ໄດ້ຮຽນພາສາຍີ່ປຸ່ນໃນປຶ້ມແບບຮຽນ “ນິຮົງໂກະ 1” ສາມາດເວົ້າຄຳທັກທາຍ ແລະ ແນະນຳຕົນເອງ, ເວົ້າກ່ຽວກັບຄອບຄົວ ແລະ ສິ່ງທີ່ຕົນເອງມັກເຮັດໃນເວລາຫວ່າງໄດ້.

ສຳລັບປຶ້ມແບບຮຽນ “ນິຮົງໂກະ 2” ນີ້ ບໍ່ສະເພາະແຕ່ຮຽນເວົ້າກ່ຽວກັບຕົນເອງເທົ່ານັ້ນ ຍັງເປັນການເປີດກວ້າງມູມມອງສູ່ສັງຄົມອ້ອມຂ້າງອີກດ້ວຍ. ນັກຮຽນຈະໄດ້ຮຽນສົນທະນາແລກປ່ຽນນຳໝູ່ຄູ່ກ່ຽວກັບກິດຈະວັດປະຈຳວັນໃນໂຮງຮຽນ ແລະ ການໃຊ້ເວລາໃນມື້ພັກທ້າຍອາທິດ ລວມເຖິງການແນະນຳກ່ຽວກັບເມືອງທີ່ຕົນອາໄສຢູ່.

ນອກຈາກນັ້ນ, ໃນປຶ້ມແບບຮຽນ “ນິຮົງໂກະ 2” ຍັງຈະໄດ້ນຳສະເໜີເນື້ອໃນກ່ຽວກັບກິດຈະວັດປະຈຳວັນ ແລະ ຄວາມສົນໃຈຂອງນັກຮຽນຊັ້ນມັດທະຍົມສຶກສາໃນຍີ່ປຸ່ນ ແລະ ປະເທດອື່ນໆວ່າເປັນແນວໃດ ເພື່ອໃຫ້ນັກຮຽນສາມາດປຽບທຽບສິ່ງທີ່ຄ້າຍຄືກັນ ຫຼື ແຕກຕ່າງ ກັນ.

ປຶ້ມແບບຮຽນພາສາຍີ່ປຸ່ນ “ນິຮົງໂກະ 2” ແມ່ນພັດທະນາຂຶ້ນພາຍໃຕ້ການຮ່ວມມືລະຫວ່າງສະຖາບັນຄົ້ນຄວ້າວິທະຍາສາດການສຶກສາຂອງລາວ ແລະ ມູນນິທິຍີ່ປຸ່ນ ໂດຍມີຊ່ຽວຊານຄົນລາວ ແລະ ຄົນຍີ່ປຸ່ນເປັນຜູ້ຂຽນຮ່ວມກັນ; ຄາດວ່າຈະພັດທະນາໃຫ້ຄົບຊຸດທັງໝົດ 7 ເຫຼັ້ມ. ພວກຂ້າພະເຈົ້າຫວັງຢ່າງຍິ່ງວ່າ ນັກຮຽນລາວຈະສາມາດນຳໃຊ້ພາສາຍີ່ປຸ່ນສື່ສານໃນສະຖານະການຕ່າງໆໄດ້ໂດຍຜ່ານການຮຽນຮູ້ຈາກປຶ້ມແບບຮຽນ “ນິຮົງໂກະ 2” ເຫຼັ້ມນີ້.



**ມູນນິທິຍີ່ປຸ່ນ, ພະແນກພາສາຍີ່ປຸ່ນ**

**ຫົວໜ້າພະແນກ ມຸລະຕະ ຮະລຸຟຸມິ**

# はじめに

このたび、ラオスの中学生の皆さんに、教科書『にほんご２』をお届けすることができ、大変うれしく思います。

皆さんは『にほんご１』で勉強し、日本語で挨拶や自己紹介をしたり、自分の家族や趣味について話したりすることができるようになりました。

『にほんご２』では、自分のことについて話すだけでなく、自分の周りの社会にも目を向け、学校生活や週末の過ごし方について友だちと話したり、自分の町について紹介したりすることができるようになります。

さらに、『にほんご２』では、日本や他の国の中学生がどんな生活を送り、何に関心を持っているのかについても紹介しています。ラオスの中学生と同じなのか、違うのか、比べてみましょう。

教科書『にほんご』シリーズは、ラオスの教育科学研究所と日本の国際交流基金の協力のもと、ラオスと日本の日本語専門家が執筆しています。全部で７巻できる予定です。『にほんご２』を使って、皆さんがより多くのことを日本語で話せるようになっていただきたいと思います。

国際交流基金　日本語事業部
部長　村田　春文

# ສາລະບານ

# ປຶ້ມຄູ່ມືຄູ "ນິຮົງໂກະ 2"

ປຶ້ມຄູ່ມືຄູ "ນິຮົງໂກະ 2" ໄດ້ມີການພັດທະນາເນື້ອໃນວິທີການສອນໃຫ້ຄູລາວ ສາມາດເຂົ້າໃຈວິທີການສອນແບບໃຫ້ນັກຮຽນໄດ້ຝຶກຄິດ ແລະ ມີສ່ວນຮ່ວມໃນການເຮັດກິດຈະກຳຕ່າງໆໃນແຕ່ລະບົດຮຽນໄດ້ງ່າຍຂຶ້ນ. ການອອກແບບເນື້ອໃນ ແມ່ນໄດ້ມີການຈັດແບ່ງຂັ້ນຕອນລະອຽດ ແລະ ມີແຜນວາດ ພ້ອມກັບຮູບປະກອບ ເພື່ອໃຫ້ຄູສາມາດດຳເນີນການຮຽນ-ການສອນໄປຕາມແຕ່ລະຂັ້ນຕອນໃຫ້ຄົບຕາມຫຼັກສູດການຮຽນ-ການສອນພາສາຍີ່ປຸ່ນ ຊັ້ນມັດທະຍົມຕອນຕົ້ນ. ພ້ອມກັນນັ້ນ, ກໍມີການແນະນຳວິທີການສອນຄຳລຳ ເພື່ອໃຫ້ນັກຮຽນລາວມີຄວາມເຂົ້າໃຈກ່ຽວກັບວັດທະນະທຳ ແລະ ກິດຈະວັດປະຈຳວັນຂອງນັກຮຽນຍີ່ປຸ່ນ ແລະ ນັກຮຽນປະເທດອື່ນໆໃຫ້ເລິກເຊິ່ງຂຶ້ນ.

ນອກຈາກນັ້ນ, ກໍໄດ້ເອົາໃຈໃສ່ພັດທະນາເນື້ອໃນກິດຈະກຳ ແລະ ບົດຝຶກຫັດ ທີ່ຕິດພັນກັບການອ່ານເພີ່ມເຂົ້າຕື່ມ ເພື່ອໃຫ້ນັກຮຽນມີຄວາມລຶ້ງເຄີຍໃນການອ່ານປະໂຫຍກ ຫຼື ບົດຄວາມສັ້ນໃນພາສາຍີ່ປຸ່ນ ແລະ ສາມາດຮຽນຮູ້ໂຄງສ້າງຂອງປະໂຫຍກ ທັງເປັນການຝຶກທັກສະການອ່ານໃຫ້ສາມາດກຳເນື້ອໃນຕົ້ນຕໍທີ່ສຳຄັນໃນປະໂຫຍກນັ້ນໄດ້.

I. **ໂຄງປະກອບຂອງປຶ້ມຄູ່ມືຄູ**

**ແຜນວາດ**:

ໃນທຸກໆບົດຈະມີແຜນວາດຂັ້ນຕອນການສອນ ຊຶ່ງຈະແບ່ງອອກເປັນ 3 ຄັ້ງຕໍ່ໜຶ່ງບົດ. ແຜນວາດແມ່ນເພື່ອໃຫ້ຄູສາມາດເບິ່ງ ແລະ ເຂົ້າໃຈໂຄງສ້າງໃນແຕ່ລະບົດ ແລະ ຂັ້ນຕອນການສອນໃນ ແຕ່ລະຄັ້ງ ໄດ້ໄວຂຶ້ນ ຊຶ່ງໃນແຕ່ລະຄັ້ງຈະລະບຸແຜນລາຍລະອຽດເນື້ອໃນທີ່ຄູຈະຕ້ອງໄດ້ສອນ ແລະ ເຮັດກິດຈະກຳຝຶກຫັດຕ່າງໆ.

ききましょう（**ການຟັງ**）:

ການຝຶກທັກສະການຟັງ ແມ່ນໃຫ້ນັກຮຽນສາມາດຄາດເດົາສະຖານະການ ແລະ ເນື້ອໃນຄວາມໝາຍຂອງຄຳສັບ ຫຼື ສຳນວນຕ່າງໆໄດ້ຈາກການຟັງ CD ຊຶ່ງເປັນສຳນວນທີ່ໃຊ້ໃນຊີວິດປະຈຳວັນ ແລະ ຫົວຂໍ້ສົນທະນາທີ່ໃກ້ຕົວນັກຮຽນຊັ້ນມັດທະຍົມຕອນຕົ້ນ.

はなしましょう（**ການເວົ້າ**）:

ການຝຶກທັກສະການເວົ້າ ແມ່ນຈະເນັ້ນການຝຶກຮູບປະໂຫຍກໄວຍາກອນໃໝ່ທີ່ໄດ້ຮຽນຮູ້ໃນບົດນັ້ນໆ ດ້ວຍຮູບແບບຖາມ-ຕອບ ເປັນຄູ່ ຫຼື ຖາມໝູ່ຄູ່ໃນຫ້ອງແລ້ວຂຽນຂໍ້ມູນ ເພື່ອນຳສະເໜີເປັນພາສາຍີ່ປຸ່ນ.

かいわ（**ການສົນທະນາ**）:

ການຝຶກທັກສະການເວົ້າ ແມ່ນຈະຝຶກຕາມບົດສົນທະນາຕົວຢ່າງ ແລະ ຝຶກເວົ້າໂດຍຄຳນຶງເຖິງສະຖານະການຕົວຈິງ. ນອກຈາກນັ້ນ ກໍຝຶກສົນທະນາ ໂດຍເວົ້າກ່ຽວກັບຕົນເອງ ແລະ ຮຽນຮູ້ກ່ຽວກັບໝູ່ຄູ່ໃນຫ້ອງ.

よみましょう（**ການອ່ານ**）:

ການຝຶກທັກສະການອ່ານ ເພື່ອໃຫ້ນັກຮຽນລຶ້ງເຄີຍໃນການອ່ານຫຼາຍຂຶ້ນ ໂດຍເລີ່ມຈາກການອ່ານເພື່ອເອົາຂໍ້ມູນໂດຍລວມ ຫຼື ອ່ານເອົາເນື້ອໃນບາງສ່ວນທີ່ຕ້ອງການຢາກຮູ້ຈາກບົດຄວາມສັ້ນ.

かつどう（**ກິດຈະກຳ**）:

ນັກຮຽນຈະໄດ້ເຮັດກິດຈະກຳ ໂດຍນຳໃຊ້ຄວາມຮູ້ທີ່ໄດ້ຮຽນໃນບົດຮຽນນັ້ນມາສ້າງເປັນບົດເພື່ອນຳສະເໜີໃນຫ້ອງຮຽນ ຫຼື ການເຮັດກິດຈະກຳຮ່ວມກັນແບບເປັນກຸ່ມ.

まとめ（**ທວນຄືນ**）:

ການທວນຄືນສິ່ງທີ່ໄດ້ຮຽນໃນບົດນັ້ນໆ ແລະ ກໍຈະມີການຍົກເອົາຮູບໄວຍາກອນທີ່ສຳຄັນຂອງແຕ່ລະບົດມາສັງລວມໄວ້ໃນທ້າຍບົດ.

Can-Do check:

ໃຫ້ນັກຮຽນໄດ້ທົບທວນຄືນການຮຽນຮູ້ຂອງຕົນເອງ ແລະ ປະເມີນກ່ຽວກັບຕົນເອງວ່າ ສາມາດເຮັດໄດ້ຕາມເປົ້າໝາຍການຮຽນຮູ້ຂອງແຕ່ລະບົດ Can-Do ໄດ້ດີສ່ຳໃດ.

コラム（**ຄໍລຳ**）:

ໃນແຕ່ລະຄໍລຳ ຈະມີການນຳສະເໜີກ່ຽວກັບຊີວິດປະຈຳວັນຂອງນັກຮຽນຍີ່ປຸ່ນຊັ້ນມັດທະຍົມສຶກສາ ແລະ ວັດທະນະທຳຍີ່ປຸ່ນ ເພື່ອໃຫ້ນັກຮຽນລາວໄດ້ມີການສົນທະນາແລກປ່ຽນຄຳຄິດເຫັນຮ່ວມກັນໃນຫ້ອງຮຽນ; ສ້າງຄວາມເຂົ້າໃຈກ່ຽວກັບຄວາມແຕກຕ່າງທາງດ້ານວັດທະນະທຳຂອງສອງປະເທດໃຫ້ເລິກເຊິ່ງຍິ່ງຂຶ້ນ.

もじ（**ການຮຽນຕົວອັກສອນ**）:

ຈະມີການທວນຄືນຕົວອັກສອນຮິລະງະນະໃນຕອນຕົ້ນ ແລະ ຫຼັງຈາກບົດທີ 13 ຈະໄດ້ເລີ່ມຮຽນຕົວອັກສອນຄະຕະຄະນະ. ສຳລັບການຮຽນຕົວອັກສອນ ແມ່ນຈະແນໃສ່ໃຫ້ນັກຮຽນສາມາດອ່ານຕົວອັກສອນໄດ້ແຕ່ຈະບໍ່ເນັ້ນໜັກການຂຽນ. ນອກນັ້ນ, ກໍມີການນຳເອົາຕົວອັກສອນໂຣມາຈິເຂົ້າມາຊ່ວຍໃນການອ່ານ ໃນຊ່ວງການຮຽນຮູ້ຕົວອັກສອນໃນຂັ້ນເລີ່ມຕົ້ນ.



## II. ວິທີການເຂົ້າບົດຮຽນໃໝ່ ແລະ ຂັ້ນຕອນການສອນ ສຳລັບຄັ້ງທີ 1 ແລະ 2 (100 ນາທີ/ຄັ້ງ)

| ເວລາ | ເນື້ອໃນການສອນ | ຄູ | ນັກຮຽນ |
|---|---|---|---|
| 5 ນາທີ | **ໜ້າປົກ**<br>Can-Do | ສົນທະນາກ່ຽວກັບຫົວຂໍ້, ຮູບພາບ ແລະ ເປົ້າໝາຍການຮຽນຮູ້ | ສົນທະນາກ່ຽວກັບເນື້ອໃນຮູບໃນໜ້າປົກ ພ້ອມກັບ Can-Do |
| 15-20 ນາທີ | **ເຂົ້າບົດຮຽນໃໝ່, ຝຶກຟັງ (ທັກສະການຟັງ)** | ນຳໃຊ້ຮູບພາບ, ສື່ການສອນ, CD ວິທີການອອກສຽງ | ຟັງ CD, ຈິນຕະນາການກ່ຽວກັບຄວາມໝາຍ, ຝຶກອອກສຽງ |

| | | | |
|---|---|---|---|
| 5-10 ນາທີ | **ຝຶກເວົ້າ (ທັກສະການເວົ້າ)** | ຄູເຮັດບົດສົນທະນາຕົວຢ່າງໃຫ້ນັກຮຽນເບິ່ງ | ຝຶກຫັດເປັນຄູ່ |
| 15-20 ນາທີ | **ສົນທະນາ (ທັກສະການນຳໃຊ້)** | ໃຫ້ນັກຮຽນຟັງບົດສົນທະນາ ແລະສອບຖາມຄວາມເຂົ້າໃຈກ່ຽວກັບເນື້ອໃນ | ຝຶກຫັດເປັນຄູ່, ເປັນກຸ່ມ |
| 10-15 ນາທີ | **ຝຶກອ່ານ (ທັກສະການອ່ານ)** | ໃຫ້ນັກຮຽນອ່ານບົດຄວາມຕາມຂັ້ນຕອນ | ຊອກຄຳສັບຫຼັກ, ຝຶກທັກສະໃນການອ່ານ |
| 15-25 ນາທີ | **ຕົວອັກສອນຄະຕະຄະນະ** | ວິທີອອກສຽງ, ວິທີຂຽນ | ຝຶກອອກສຽງ, ອ່ານ ແລະ ຂຽນ |
| 5 ນາທີ | **ສະຫຼຸບ, ວຽກບ້ານ** | ສັງລວມຄືນບົດຮຽນ, ວຽກບ້ານ | ທົບທວນຄວາມເຂົ້າໃຈ |

## III. ວິທີການສອນຊົ່ວໂມງກິດຈະກຳ ແລະ ການນຳສະເໜີບົດ ສຳລັບຄັ້ງທີ 3 (100 ນາທີ/ຄັ້ງ)

| ເວລາ | ເນື້ອໃນການສອນ | ຄູ | ນັກຮຽນ |
|---|---|---|---|
| 10 ນາທີ | **ທວນຄືນບົດຮຽນຜ່ານມາ ແລະ ສຳນວນທີ່ຈະໃຊ້** | ສົນທະນາກ່ຽວກັບເນື້ອໃນ ແລະ ຮູບໃນໜ້າປົກ | ທົບທວນຄືນສຳນວນທີ່ຈະໃຊ້ໃນການເຮັດກິດຈະກຳ |
| 20 ນາທີ | **ແຕ່ລະກຸ່ມເຮັດກິດຈະກຳ** | ຄູ ແລະ NP ໃຫ້ຄຳແນະນຳ | ຝຶກຖາມ-ຕອບໃນກຸ່ມ |
| 20 ນາທີ | **ແຕ່ລະກຸ່ມຂຶ້ນນຳສະເໜີ** | ຮັບຟັງການນຳສະເໜີຮ່ວມກັບ NP(ບັນທຶກຂໍ້ແນະນຳ) | ຂຶ້ນນຳສະເໜີ, ຖາມ-ຕອບ |
| 10 ນາທີ | **ທວນຄືນ (まとめ)** | ທົບທວນຄວາມເຂົ້າໃຈຂອງນັກຮຽນ | ທວນຄືນຮູບໄວຍາກອນຫຼັກ |
| 10 ນາທີ | Can-Do Check | ອະທິບາຍວິທີການເຮັດ Can-Do Check | ປະເມີນຕົນເອງດ້ວຍການເຮັດ Can-Do Check |
| 25 ນາທີ | **ຄໍລໍາ** | ສົນທະນາກ່ຽວກັບຂໍ້ມູນພື້ນຖານທີ່ຕິດພັນກັບຫົວຂໍ້ໃນຄໍລໍາ | ສົນທະນາແລກປ່ຽນຄວາມຮູ້ກ່ຽວກັບຫົວຂໍ້ໃນແຕ່ລະຄໍລໍາ |
| 5 ນາທີ | **ສະຫຼຸບ, ວຽກບ້ານ** | ສັງລວມຄືນບົດຮຽນ | ທົບທວນຄວາມເຂົ້າໃຈ |

## IV. ການຈັດແບ່ງຈຳນວນຕົວອັກສອນໃນແຕ່ລະບົດ

ບົດທີ 13: ຕົວອັກສອນແຖວ ア、カ、ガ
ບົດທີ 14: ຕົວອັກສອນແຖວ サ、ザ、タ、ダ
ບົດທີ 15: ຕົວອັກສອນແຖວ ナ、ハ、バ、パ
ບົດທີ 16: ຕົວອັກສອນແຖວ マ、ヤ
ບົດທີ 17: ຕົວອັກສອນແຖວ ラ、ワ
ບົດທີ 18: ຕົວອັກສອນ ສຽງກັກ, ສຽງຍາວ, ສຽງຄວບ
ບົດທີ 19: ຕົວອັກສອນສຽງພາສາຕ່າງປະເທດ
ບົດທີ 20: ທວນຄືນຕົວອັກສອນຄະຕະຄະນະ

# ເນື້ອໃນ Can-do ໃນປຶ້ມແບບຮຽນ “ນິຮົງໂກະ 2”

| ບົດທີ | Can-do | |
|---|---|---|
| 11 | ສາມາດຖາມ-ຕອບກ່ຽວກັບວັນເກີດໄດ້ | ☆☆☆ |
| | ສາມາດຖາມ-ຕອບວ່າ ຕ້ອງການຫຍັງໃນວັນເກີດ | ☆☆☆ |
| 12 | ສາມາດຖາມ-ຕອບວ່າ ກິນ(ອາຫານ)ຫຍັງ | ☆☆☆ |
| | ສາມາດຖາມ-ຕອບ ກ່ຽວກັບພຶດຕິກຳການກິນໄດ້ | ☆☆☆ |
| 13 | ສາມາດແນະນຳສະຖານທີ່ຕ່າງໆ ໃນໂຮງຮຽນໄດ້ | ☆☆☆ |
| | ສາມາດຖາມ-ຕອບວ່າ ສະຖານທີ່ຕ່າງໆໃນໂຮງຮຽນຢູ່ໃສ | ☆☆☆ |
| 14 | ສາມາດຖາມ-ຕອບກ່ຽວກັບເວລາໄດ້ | ☆☆☆ |
| | ສາມາດຖາມ-ຕອບເວລາເລີ່ມຕົ້ນ ແລະ ເວລາສິ້ນສຸດໄດ້ | ☆☆☆ |
| 15 | ສາມາດຖາມ-ຕອບກ່ຽວກັບມື້ຮຽນໄດ້ | ☆☆☆ |
| | ສາມາດຖາມ-ຕອບເວລາເລີ່ມຕົ້ນ ແລະ ເວລາສິ້ນສຸດຂອງຊົ່ວໂມງຮຽນໄດ້ | ☆☆☆ |
| 16 | ສາມາດເວົ້າຊີວິດປະຈຳວັນໃນໜຶ່ງມື້ໄດ້ | ☆☆☆ |
| | ສາມາດຖາມ-ຕອບວ່າ ເຮັດຫຍັງ, ຕອນຈັກໂມງ | ☆☆☆ |
| 17 | ສາມາດຖາມ-ຕອບວ່າ ໄປໃສ | ☆☆☆ |
| | ສາມາດຖາມ-ຕອບວ່າ ໄປແນວໃດ | ☆☆☆ |
| | ສາມາດຖາມ-ຕອບວ່າ ໄປນຳໃຜ | ☆☆☆ |
| 18 | ສາມາດຖາມ-ຕອບກ່ຽວກັບ ລາຄາສິນຄ້າໄດ້ | ☆☆☆ |
| 19 | ສາມາດຖາມ-ຕອບສິ່ງທີ່ຕົນເອງເຮັດໃນທ້າຍອາທິດວ່າ ເຮັດຫຍັງ, ຢູ່ໃສ | ☆☆☆ |
| | ສາມາດຊັກຊວນໝູ່ເຮັດກິດຈະກຳຕ່າງໆໃນທ້າຍອາທິດໄດ້ | ☆☆☆ |
| 20 | ສາມາດເວົ້າເຖິງບ້ານທີ່ຕົນເອງອາໄສຢູ່ວ່າເປັນສະຖານທີ່ແນວໃດ | ☆☆☆ |
| | ສາມາດອະທິບາຍໄດ້ວ່າຢູ່ໃນບ້ານນັ້ນມີຫຍັງແດ່ | ☆☆☆ |

# だい１１か　たんじょうび　(ວັນເກີດ)



ຄັ້ງທີ 1




**<u>ໜ້າປົກ</u>**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນສາມາດເວົ້າກ່ຽວກັບວັນເກີດ, ສິ່ງທີ່ເຮັດ ແລະ ສິ່ງທີ່ຢາກໄດ້ໃນວັນເກີດ.

❖ **<u>ຂັ້ນຕອນການສອນ</u>**

1) ສົນທະນາກ່ຽວກັບຫົວບົດ ແລະ ເນື້ອໃນໂດຍການເບິ່ງຮູບໃນໜ້າປົກ.
2) ໃຫ້ນັກຮຽນທົບທວນຄືນກ່ຽວກັບວັນເກີດຂອງຕົນເອງ, ໃຫ້ນັກຮຽນສົນທະນາເປັນກຸ່ມ ເຊັ່ນ:
    - ເຮັດຫຍັງໃນວັນເກີດ?
    - ເຄີຍໄດ້ຮັບຂອງຂວັນຫຍັງແດ່? ຢາກໄດ້ຫຍັງເປັນຂອງຂວັນ?
    - ເວົ້າຄຳອວຍພອນແນວໃດໃນວັນເກີດ?
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do
    1. ສາມາດຖາມ-ຕອບກ່ຽວກັບວັນເກີດໄດ້
    2. ສາມາດຖາມ-ຕອບວ່າ ຕ້ອງການຫຍັງໃນວັນເກີດ

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນສົນທະນາກ່ຽວກັບຮູບພາບໃນໜ້າປົກ ແລະ ຈິນຕະນາການກ່ຽວກັບສະຖານະການ ແລະ ເນື້ອໃນບົດຮຽນໂດຍຜ່ານການສັງເກດຮູບຢູ່ໜ້າປົກ.
- ສົນທະນາກ່ຽວກັບວັນທີ ແລະ ເດືອນ ເກີດຂອງນັກຮຽນ ເຊັ່ນ: ວັນເກີດເຈົ້າມື້ໃດ, ເດືອນໃດ? ບໍ່ຈຳເປັນຕ້ອງຖາມປີ ເນື່ອງຈາກວ່າບົດນີ້ບໍ່ໄດ້ຮຽນເວົ້າປີເທື່ອ.


1. ວັນເກີດເຈົ້າ ມື້ໃດ?

ききましょう 1

❖ ເດືອນ

1 2 3 4 5 6 7 8 9 10 11 12

～がつ ～gatsu ຕົວຢ່າງ: 1 がつ ichi-gatsu

※ 4 がつ（しがつ shi-gatsu）
7 がつ（しちがつ shichi-gatsu）
9 がつ（くがつ ku-gatsu）

はなしましょう

ຝຶກສົນທະນາເປັນຄູ່; A ເວົ້າເດືອນ, B ຊີ້ໃສ່ເດືອນໃນປະຕິທິນ.

2

## 1. ວັນເກີດເຈົ້າ ມື້ໃດ?

## ききましょう **“ເດືອນ”**

❖ **<u>ຄາດໝາຍ</u>**:

ໃຫ້ນັກຮຽນຟັງ ແລະ ຈຳແນກສຽງແຕ່ລະ “ເດືອນ” ພ້ອມທັງຮູ້ຄວາມໝາຍຂອງຄຳສັບນັ້ນໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ຄູພານັກຮຽນສົນທະນາກ່ຽວກັບຮູບປະຕິທິນໃນປຶ້ມຮຽນ.
2) ທົບທວນຄືນການນັບເລກ ແຕ່ 1-12.
3) ຟັງ CD ພ້ອມທັງເບິ່ງຮູບປະຕິທິນ “ເດືອນ”.
4) ຟັງ CD ຖາມເຖິງສຽງທີ່ໄດ້ຍິນກ່ຽວກັບ “ເດືອນ”.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄຳສັບ, ນັກຮຽນເບິ່ງຮູບ ແລ້ວຝຶກອອກສຽງ.
7) ຝຶກອອກສຽງຄຳສັບສຽງພິເສດ ເຊັ່ນ:
   - 4 がつ（しがつ shi-gatsu）
   - 7 がつ（しちがつ shichi-gatsu）
   - 9 がつ（くがつ ku-gatsu）

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ເອົາໃຈໃສ່ການອອກສຽງ “ເດືອນ 4, 7 ແລະ 9” ເພາະຈະອອກສຽງບໍ່ຄືກັບນັບເລກ ເຊັ່ນ:

4 がつ（<u>しがつ</u> shi-gatsu） **ຈະບໍ່ອອກສຽງ** よんがつ

7 がつ（<u>しちがつ</u> shichi-gatsu） **ຈະບໍ່ອອກສຽງ** ななかつ

9 がつ（<u>くがつ</u> ku-gatsu） **ຈະບໍ່ອອກສຽງ** きゅうがつ

## はなしましょう **“ເດືອນ”**

❖ **<u>ຄາດໝາຍ</u>**:

ໃຫ້ນັກຮຽນສາມາດເວົ້າແຕ່ລະ “ເດືອນ” ເປັນພາສາຍີ່ປຸ່ນໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ຝຶກຫັດ ຄູ-ນັກຮຽນ
   - ໃຫ້ນັກຮຽນຝຶກອອກສຽງໂດຍນຳໃຊ້ປະຕິທິນແລ້ວຊີ້ໃສ່ "ເດືອນ" ຕາມລຳດັບ.
   - ນັກຮຽນເວົ້າ "ເດືອນ" ເປັນພາສາຍີ່ປຸ່ນຕາມລຳດັບແຕ່ ເດືອນ1 ຫາ ເດືອນ12.
   - ຊີ້ໃສ່ປະຕິທິນໂດຍບໍ່ຕາມລຳດັບ; ໃຫ້ນັກຮຽນທັງໝົດເວົ້າແຕ່ລະເດືອນຕາມທີ່ຄູຊີ້ບອກ.
   - ໃຫ້ນັກຮຽນແຕ່ລະຄົນເວົ້າ ຫຼື ເວົ້າເປັນແຖວ ຫຼື ເວົ້າເປັນກຸ່ມ.
2) ຝຶກຫັດ ນັກຮຽນ-ນັກຮຽນ
   - ນັກຮຽນຝຶກຫັດເປັນຄູ່: A ເວົ້າເດືອນ, B ຊີ້ໃສ່ເດືອນໃນປະຕິທິນ.

   <u>ຕົວຢ່າງ</u>: A: しちがつ、ごがつ

   B: ຊີ້ໃສ່ປະຕິທິນ "ເດືອນ 7", ຊີ້ໃສ່ປະຕິທິນ "ເດືອນ 5".
   - ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ຄູ່ໃນຫ້ອງຟັງ 2-3 ຄູ່.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຄູຝຶກເວົ້າເປັນຕົວຢ່າງໃຫ້ນັກຮຽນເບິ່ງກ່ອນ ຫຼັງຈາກນັ້ນ, ຈຶ່ງໃຫ້ນັກຮຽນຝຶກເປັນຄູ່.
- ຄູກະກຽມປະຕິທິນເດືອນ ອາດຈະທາສີໃສ່ເດືອນທີ່ມີການອອກສຽງພິເສດໃຫ້ນັກຮຽນໄດ້ຈຳແນກງ່າຍຂຶ້ນ.



ききましょう "ວັນທີ"

ききましょう

❖ ວັນທີ 2

| | | | | | | |
|---|---|---|---|---|---|---|
| 1 ついたち tsuitachi | 2 ふつか futsuka | 3 みっか mikka | 4 よっか yokka | 5 いつか itsuka | 6 むいか muika | 7 なのか nanoka |
| 8 ようか yooka | 9 ここのか kokonoka | 10 とおか tooka | 11 じゅう いちにち juuichi-nichi | 12 じゅう ににち juuni-nichi | 13 じゅう さんにち juusan-nichi | 14 じゅう よっか juu yokka |
| 15 じゅう ごにち juugo-nichi | 16 じゅう ろくにち juuroku-nichi | 17 じゅう しちにち juushichi-nichi | 18 じゅう はちにち juuhachi-nichi | 19 じゅう くにち juuku-nichi | 20 はつか hatsuka | 21 にじゅう いちにち nijuuichi-nichi |
| 22 にじゅう ににち nijuuni-nichi | 23 にじゅう さんにち nijuusan-nichi | 24 にじゅう よっか nijuu yokka | 25 にじゅう ごにち nijuugo-nichi | 26 にじゅう ろくにち nijuuroku - nichi | 27 にじゅう しちにち nijuu shichi-nichi | 28 にじゅう はちにち nijuu hachi-nichi |
| 29 にじゅう くにち nijuuku-nichi | 30 さんじゅう にち sanjuu-nichi | 31 さんじゅう いちにち sanjuu ichi-nichi | | | | |

はなしましょう

ຝຶກສົນທະນາເປັນຄູ່; A ເວົ້າວັນທີ, B ຊີ້ໃສ່ວັນທີ.

3

❖ **<u>ຄາດໝາຍ</u>**:

ນັກຮຽນຟັງ ແລະ ຈຳແນກສຽງ "ວັນທີ" ແລະ ຮູ້ຄວາມໝາຍຂອງຄຳສັບນັ້ນໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໃນປຶ້ມຮຽນ.
2) ທົບທວນຄືນການນັບເລກ ແຕ່ 1-31.
3) ຟັງ CD ພ້ອມທັງເບິ່ງຮູບປະຕິທິນ "ວັນທີ".
4) ຟັງ CD ແລ້ວຖາມເຖິງສຽງທີ່ໄດ້ຍິນກ່ຽວກັບ "ວັນທີ".
5) ຟັງ CD ແລ້ວຝຶກເວົ້າອອກສຽງ.

6) ໃຊ້ບັດຮູບຄຳສັບ. ນັກຮຽນເບິ່ງຮູບ ແລ້ວຝຶກອອກສຽງ.

7) ຖາມກ່ຽວກັບຈຸດພິເສດໃນການອອກສຽງ “ວັນທີ”.

8) ຝຶກອອກສຽງຄຳສັບສຽງພິເສດ ເຊັ່ນ:

- ວັນທີ 1 -10 (ついたち、ふつか、みっか. . . )
- ４　よっか yokka / 8　ようか youka
- １４　じゅうよっか　juu-yokka
- １９　じゅうくにち　juuku-nichi
- ２０　はつか　hatsuka
- ２４　にじゅうよっか nijuu-yokka
- ２９　にじゅうくにち nijuuku-nichi

9) ຝຶກອອກສຽງ

- “ວັນທີ 1-10” ຈະມີການອອກສຽງພິເສດ ສ່ວນຫຼາຍຈະລົງທ້າຍດ້ວຍ “か”. ນອກຈາກນັ້ນ, ວັນທີ 14, 20, 24 ກໍຈະລົງທ້າຍດ້ວຍ “か” ເຊັ່ນກັນ.
- ລົງທ້າຍດ້ວຍ “にち” ໂດຍການເອົາຕົວເລກ + “にち”

<u>ຕົວຢ່າງ</u>: ວັນທີ 13 “じゅうさん + にち” 13じゅうさん にち

## はなしましょう **“ວັນທີ”**

❖ **<u>ຄາດໝາຍ</u>**:

ໃຫ້ນັກຮຽນສາມາດເວົ້າແຕ່ລະ “ວັນທີ” ແລະ ຈື່ວິທີການອອກສຽງພິເສດຂອງວັນທີໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ຝຶກຫັດ ຄູ-ນັກຮຽນ

- ໃຫ້ນັກຮຽນຝຶກອອກສຽງໂດຍນຳໃຊ້ປະຕິທິນແລ້ວຊີ້ໃສ່ “ວັນທີ” ຕາມລຳດັບ.
- ໃຫ້ນັກຮຽນເວົ້າ “ວັນທີ” ເປັນພາສາຍີ່ປຸ່ນຕາມລຳດັບ 1-10, 11-20 ແລະ 21-31.
- ຊີ້ໃສ່ປະຕິທິນໂດຍບໍ່ຕາມລຳດັບ; ນັກຮຽນທັງໝົດເວົ້າແຕ່ລະວັນທີຕາມທີ່ຄູຊີ້ບອກໃນປະຕິທິນ.
- ໃຫ້ນັກຮຽນໄດ້ຝຶກອອກສຽງວັນທີທີ່ອອກສຽງພິເສດ. ຝຶກເວົ້າເປັນແຖວ, ເປັນກຸ່ມ.

2) ຝຶກຫັດ ນັກຮຽນ-ນັກຮຽນ

- ນັກຮຽນຝຶກຫັດເປັນຄູ່: A ເວົ້າວັນທີ, B ຊີ້ໃສ່ວັນທີໃນປະຕິທິນ

ຕົວຢ່າງ: A: はつか、じゅうろくにち

B: ຊີ້ໃສ່ປະຕິທິນ "ວັນທີ 20", "ວັນທີ 16"`.

- ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

## きいてかきましょう **"ຝຶກຟັງ ແລະ ຂຽນ"**

❖ **ຂັ້ນຕອນການສອນ**

1) ຟັງ CD ຄັ້ງທີ 1 ບໍ່ທັນໃຫ້ນັກຮຽນຂຽນຄຳຕອບ.
2) ຟັງ CD ຄັ້ງທີ 2 ໃຫ້ນັກຮຽນຂຽນຄຳຕອບ.
3) ຟັງ CD ຄັ້ງທີ 3 ໃຫ້ນັກຮຽນສົມທຽບຄຳຕອບນຳໝູ່.
4) ຟັງ CD ຄັ້ງທີ 4 ໃຫ້ນັກຮຽນກວດຄືນຄຳຕອບ.



ຄຳຕອບ

1. 12 にちです。 2. 19 にちです。 3. 31 にちです。 4. はつかです。

5. にじゅうよっかです 6. ついたちです。 7. みっかです 8. とおかです。

9. 3 がつようかです。 10. 11 がつむいかです。



ຟັງສຽງໃນ CD ແລະ ຂຽນວັນທີ. 3

① ______ ② ______ ③ ______ ④ ______

⑤ ______ ⑥ ______ ⑦ ______ ⑧ ______

⑨ ______ ⑩ ______

はなしましょう

ສົນທະນາເປັນຄູ່ ແລະ ຝຶກອ່ານວັນທີ. (ຍີ່ປຸ່ນຈະຂຽນເດືອນກ່ອນວັນທີ.)

① 9/26 ② 7/4 ③ 4/10 ④ 12/1 ⑤ 8/8

⑥ 10/2 ⑦ 11/5 ⑧ 12/6 ⑨ 1/9 ⑩ 3/7

はなしましょう

ຟັງຄູເວົ້າກ່ຽວກັບວັນບຸນ ຫຼື ງານຕ່າງໆ ແລ້ວຕອບຄຳຖາມ ວັນບຸນ ຫຼື ງານຕ່າງໆນັ້ນຈັດຂຶ້ນເມື່ອໃດເປັນພາສາຍີ່ປຸ່ນ.



4

ຄຳຕອບໃນ CD (スクリプト)

① じゅうに　にちです。
② じゅうく　にちです。
③ さんじゅう　いち　にちです。
④ はつかです。
⑤ にじゅう　よっかです。
⑥ ついたちです。
⑦ みっかです。
⑧ とおかです。
⑨ ごがつ　にじゅうななにちです。
⑩ しちがつ　じゅうさんにちです。

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ນັກຮຽນຟັງ ແລ້ວສົມທຽບຄຳຕອບນຳໝູ່; ຖ້າບໍ່ຄືກັນໃຫ້ຟັງ CD ຕື່ມ.
- ການເວົ້າ "ເດືອນ", "ວັນທີ" ໃນພາສາຍີ່ປຸ່ນຈະເວົ້າ "ເດືອນ" ກ່ອນ "ວັນທີ" ຊຶ່ງແຕກຕ່າງກັບພາສາລາວ.

## はなしましょう (ຝຶກເວົ້າ "ເດືອນ", "ວັນທີ")

❖ **ຂັ້ນຕອນການສອນ**

1) ໃຫ້ນັກຮຽນຝຶກເປັນຄູ່; A ເວົ້າຂໍ້ ①～⑤, B ເວົ້າຂໍ້ ⑥～⑩
2) ນັກຮຽນສະຫຼັບກັນຝຶກເວົ້າ.
3) ນັກຮຽນແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

| | |
|---|---|
| ① 9/26（くがつ にじゅうろくにち） | ② 7/4 （しちがつ よっか） |
| ③ 4/10 （しがつ とおか） | ④ 12/1 （じゅうにがつ ついたち） |
| ⑤ 8/8 （はちがつ ようか） | ⑥ 10/2 （じゅうがつ ふつか） |
| ⑦ 11/5（じゅういちがつ いつか） | ⑧ 12/6 （じゅうにがつ むいか） |
| ⑨ 1/9 （いちがつ ここのか） | ⑩ 3/7（さんがつ なのか） |

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ເວົ້າ "ເດືອນ" ກ່ອນ "ວັນທີ" ຄູເວົ້າເປັນຕົວຢ່າງໃຫ້ນັກຮຽນຟັງກ່ອນ ຕົວຢ່າງ: ① 9/26（くがつ にじゅうろくにち）.
- ໃຫ້ເອົາໃຈໃສ່ການອອກສຽງພິເສດໃນ "ເດືອນ" ແລະ "ວັນທີ".

## はなしましょう (ຝຶກເວົ້າກ່ຽວກັບວັນສຳຄັນຕ່າງໆ)

❖ <u>ຂັ້ນຕອນການສອນ</u>

1) ໃຫ້ນັກຮຽນສົນທະນາກ່ຽວກັບວັນສຳຄັນຕ່າງໆຂອງລາວ.
2) ຄູຂຽນໃສ່ກະດານເປັນຕົວເລກ.
3) ນັກຮຽນເວົ້າອອກສຽງ "ເດືອນ" ແລະ "ວັນທີ" ຂອງວັນສຳຄັນຕ່າງໆ.

| | | |
|---|---|---|
| ○ ວັນຄູແຫ່ງຊາດ | １０/７ | （じゅうがつ なのか） |
| ○ ວັນເດັກນ້ອຍສາກົນ, ວັນປູກຕົ້ນໄມ້ | ６/１ | （ろくがつ ついたち） |
| ○ ວັນຊາດ | １２/２ | （じゅうにがつ ふつか） |
| ○ ວັນກຳມະກອນ | ５/１ | （ごがつ ついたち） |
| ○ ວັນແມ່ຍິງສາກົນ | ３/８ | （さんがつ ようか） |

<u>**ຂໍ້ຄວນເອົາໃຈໃສ່ສຳລັບຄູ**</u>

- ກະກຽມປະຕິທິນທີ່ລະບຸວັນບຸນປະເພນີ, ວັນຕ່າງໆໃນປີນັ້ນ.



☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຖາມຄືນການເວົ້າ "ເດືອນ ແລະ ວັນທີ" ແບບຍີ່ປຸ່ນ ແລະ ແບບພາສາລາວຕ່າງກັນແນວໃດ?
- ມື້ນີ້ວັນທີເທົ່າໃດ, ເດືອນໃດ? ມື້ອື່ນເດ?
- ຈົ່ງເວົ້າວັນທີ 1-10 ແລະ ສຽງພິເສດ ພ້ອມກັບໝົດທຸກຄົນໃນຫ້ອງ.
- ວຽກບ້ານ: ໃຫ້ນັກຮຽນທວນຄືນ ແລະ ຈື່ການເວົ້າ "ວັນທີ", "ເດືອນ" ໃນພາສາຍີ່ປຸ່ນ.



ຄັ້ງທີ 2



かいわ 4

ななさんの　たんじょうびは　いつですか。
Nana-san no tanjoobi wa itsu desu ka.

7がつ　なのかです。
Shichi-gatsu nanoka desu.

ケオさんの　たんじょうびは？
Keo-san no tanjoobi wa?

9がつ　いつかです。
Ku-gatsu itsuka desu.

えっ、きょうですね。
Et, kyoo desu ne.

たんじょうび　おめでとう。
Tanjoobi omedetoo.

ありがとう。
Arigatoo.

はなしましょう

（1）ວັນເກີດຂອງເຈົ້າມື້ໃດ? ຂຽນໃສ່ຕາຕະລາງ.

（2）ຖາມໝູ່ 3 ຄົນ.

| | | |
|---|---|---|
| （1） | わたし watashi | |
| （2） | さん san | |
| | さん san | |
| | さん san | |

5

## かいわ "ບົດສົນທະນາ"

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຖາມ-ຕອບ "ເດືອນ" ແລະ "ວັນທີ" ໃນປະໂຫຍກພາສາຍີ່ປຸ່ນໄດ້.

❖ **ຂັ້ນຕອນການສອນ "ບົດສົນທະນາ"**

1) ທວນຄືນການເວົ້າ "ເດືອນ" ແລະ "ວັນທີ".
   - ໃຫ້ທວນຄືນບົດຮຽນຜ່ານມາ ໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
   - ຖາມວັນເກີດຂອງນັກຮຽນໃນຫ້ອງ 2-3 ຄົນ.
2) ສົນທະນາກ່ຽວກັບຮູບ ແລະ ສະຖານະການໃນບົດ.
3) ໃຫ້ນັກຮຽນຟັງ CD ດ້ວຍຄໍາສັບທີ່ໄດ້ຍິນ ແລະ ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ.
4) ຄູຖາມກ່ຽວກັບສຽງ ຫຼື ຄໍາສັບທີ່ໄດ້ຍິນ ແລະ ຄວາມໝາຍ ໃນບົດສົນທະນາ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ຄູເປັນຕົວລະຄອນໃນບົດສົນທະນາຕົວຢ່າງ. ຫຼັງຈາກນັ້ນ, ນັກຮຽນຝຶກສົນທະນາເປັນຄູ່.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ຄູໃຫ້ນັກຮຽນຈິນຕະນາການຈາກຮູບ; ຝຶກໃຊ້ຄວາມຄິດເພື່ອຄົ້ນຫາຄໍາຕອບດ້ວຍຕົນເອງ, ບໍ່ໃຫ້ຄູບອກຄໍາຕອບກ່ອນ.
- ໃຫ້ນັກຮຽນຮູ້ການນໍາໃຊ້ສໍານວນຖາມ-ຕອບກ່ຽວກັບວັນເກີດໃນສະຖານະການຕ່າງໆ.

## はなしましょう (ຝຶກຖາມ-ຕອບກ່ຽວກັບວັນເກີດ)

❖ **<u>ຂັ້ນຕອນການສອນ</u>**

- ຂຽນວັນເກີດຂອງເຈົ້າໃສ່ຕາຕະລາງ.
- ຖາມໝູ່ 3 ຄົນໃນຫ້ອງ ແລ້ວຂຽນຊື່ຂອງເຂົາເຈົ້າ ພ້ອມວັນເກີດ.

<u>ຕົວຢ່າງ</u>: A: 〜さんの　たんじょうびは　いつですか。

B: しちがつ　じゅうさん　にちです。（７／１３）

- ໃຫ້ 3 - 5 ຄົນ ລຸກຂຶ້ນເວົ້າວັນເກີດຂອງໝູ່ໃຫ້ທຸກຄົນໃນຫ້ອງຟັງ.

<u>ຕົວຢ່າງ</u>: 〜さんの たんじょうびは　しちがつ じゅうさんにちです。（７／１３）

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນເວົ້າ 〜がつ　〜にち　ໄດ້.





2. ເຈົ້າຢາກໄດ້ຫຍັງ?

ききましょう 5

くつ kutsu　かばん kaban　ぼうし booshi

シャツ shatsu　けいたいでんわ keetaidenwa　とけい tokee

かいわ 6

なにが　ほしいですか。
Nani ga hoshii desu ka.

くつが　ほしいです。
Kutsu ga hoshii desu.

はなしましょう
ຖາມວັນເກີດຂອງໝູ່ ແລະ ຖາມໝູ່ ວັນເກີດຢາກໄດ້ຫຍັງ?

ຕົວຢ່າງ A： たんじょうびは　いつですか。
Tanjoobi wa itsu desu ka.
B： ９がつ　２５にち です。
Ku-gatsu nijuugo-nichi desu.
A： なにが　ほしいですか。
Nani ga hoshii desu ka.
B： とけい が　ほしいです。
Tokee ga hoshii desu.

☆ ລາວຢາກໄດ້ຫຍັງຫຼາຍທີ່ສຸດ?

6

ききましょう **"ສິ່ງທີ່ຢາກໄດ້"**

❖ **<u>ຄາດໝາຍ</u>**:

ໃຫ້ນັກຮຽນສາມາດເວົ້າຄຳສັບກ່ຽວກັບສິ່ງຂອງທີ່ຢາກໄດ້ໃນວັນເກີດ.

❖ **<u>ຂັ້ນຕອນການສອນ</u> "ເຈົ້າຢາກໄດ້ຫຍັງ"**

1) ສົນທະນາກ່ຽວກັບຮູບ ແລະ ສິ່ງຂອງຕ່າງໆ.
2) ຟັງ CD ພ້ອມທັງເບິ່ງຮູບ.
3) ຟັງ CD ແລ້ວຝຶກເວົ້າອອກສຽງ.
4) ໃຊ້ບັດຮູບຄຳສັບ, ນັກຮຽນເບິ່ງຮູບແລ້ວຝຶກອອກສຽງ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຄຳສັບທີ່ໃຊ້ໃນບົດນີ້ແມ່ນຄຳສັບກ່ຽວກັບສິ່ງຂອງທີ່ເປັນພື້ນຖານ ແລະ ບໍ່ໄດ້ແຍກປະເພດຍ່ອຍ ເຊັ່ນ: ເກີບ, ໂມງ (ບໍ່ໄດ້ເວົ້າເຖິງ ເກີບກິລາ, ໂມງຕັ້ງໂຕະ...)




かいわ **“ຖາມ-ຕອບ ຢາກໄດ້ຫຍັງ”**

❖ **ຄາດໝາຍ**

ໃຫ້ນັກຮຽນຖາມ-ຕອບ ສິ່ງທີ່ຢາກໄດ້ໃນວັນເກີດ.

❖ **ຂັ້ນຕອນການສອນ**

1) ຄູຖາມນັກຮຽນກ່ຽວກັບຮູບ ແລະ ສະຖານະການທີ່ ທ້າວແກ້ວ ແລະ ນາງມະນະ ລົມກັນ.
2) ໃຫ້ນັກຮຽນຟັງ CD ແລ້ວຝຶກເວົ້າອອກສຽງ.
3) ຄູເປັນຕົວລະຄອນໃນບົດສົນທະນາ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ບໍ່ແປເປັນພາສາລາວ; ໃຫ້ນັກຮຽນຄິດ ຫຼື ຈິນຕະນາການຈາກຮູບ ແລະ ສະຖານນະການນັ້ນ.

はなしましょう **“ຝຶກຖາມ-ຕອບກ່ຽວກັບສິ່ງທີ່ຢາກໄດ້ໃນວັນເກີດ”**

❖ **ຂັ້ນຕອນການສອນ**

1) ຝຶກຫັດ ນັກຮຽນ-ນັກຮຽນ　はなしましょう
   - ນັກຮຽນຝຶກຫັດເປັນຄູ່ ຖາມ-ຕອບ ກ່ຽວກັບວັນເກີດ ແລະ ສິ່ງທີ່ຢາກໄດ້.

   ຕົວຢ່າງ:　A:　～さん、たんじょうびは　いつですか。
   　　　　B:　～　です。
   　　　　A:　なにが　ほしいですか。
   　　　　B:　～が　ほしいです。
   - ຖາມໝູ່ໃນຫ້ອງ 3 ຄົນ ກ່ຽວກັບສິ່ງທີ່ຢາກໄດ້ໃນວັນເກີດ.
   - ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.
2) ສົນທະນາກ່ຽວກັບສິ່ງທີ່ນັກຮຽນໃນຫ້ອງຢາກໄດ້ຫຼາຍກວ່າໝູ່ພ້ອມທັງບອກສາເຫດວ່າ ເປັນຫຍັງຈຶ່ງຢາກໄດ້ສິ່ງນັ້ນຫຼາຍກວ່າໝູ່. ສາມາດສົນທະນາເປັນພາສາລາວໄດ້.
   - ຄູຂຽນອັນດັບ1-3 ໃສ່ກະດານກ່ຽວກັບສິ່ງທີ່ນັກຮຽນໃນຫ້ອງຢາກໄດ້ຫຼາຍກວ່າໝູ່.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ກະກຽມຄຳສັບ ທີ່ຄາດວ່ານັກຮຽນຢາກໄດ້ໃນວັນເກີດ ເຊັ່ນ:

  おもちゃ(ຂອງຫຼິ້ນ), まんが(ປຶ້ມກາຕູນ), ジャケット(ເສື້ອກັນໜາວ),

  スカート(ກະໂປ່ງ)...

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຖາມ-ຕອບກ່ຽວກັບສິ່ງທີ່ຕົນເອງຢາກໄດ້; ພາສາຍີ່ປຸ່ນເວົ້າແນວໃດ?
- ທົບທວນຄຳສັບກ່ຽວກັບການເອີ້ນຊື່ສິ່ງຂອງເປັນພາສາຍີ່ປຸ່ນ.
- ວຽກບ້ານ: ໃຫ້ນັກຮຽນກະກຽມບັດອວຍພອນວັນເກີດເພື່ອມາຂຽນຄຳອວຍພອນເປັນພາສາຍີ່ປຸ່ນ ໃນຊົ່ວໂມງກິດຈະກຳ.



ຄັ້ງທີ 3




かつどう **"ການຂຽນບັດອວຍພອນ"**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຂຽນບັດອວຍພອນວັນເກີດເປັນພາສາຍີ່ປຸ່ນ.

❖ **<u>ທວນຄືນບົດຮຽນຜ່ານມາ</u>**

- ໃຫ້ທວນຄືນບົດຮຽນຜ່ານມາໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
- ຖາມວັນເກີດຂອງນັກຮຽນໃນຫ້ອງ 2-3 ຄົນ.

❖ **<u>ຂັ້ນຕອນການສອນ</u>**

1) ສົນທະນາກ່ຽວກັບຄຳອວຍພອນໃນວັນເກີດ
2) ຄຳອວຍພອນໃນວັນເກີດເປັນພາສາຍີ່ປຸ່ນ

   たんじょうび　おめでとう。
3) ຝຶກເວົ້າອອກສຽງ ແລະ ຝຶກວິທີຂຽນ.

4) ຝຶກຂຽນຊື່ ຜູ້ໃຫ້ ແລະ ຜູ້ຮັບ. ຄູຢາຍເຈ້ຍຊື່ຂອງນັກຮຽນແຕ່ລະຄົນທີ່ຂຽນດ້ວຍຕົວອັກສອນຄະຕະຄະນະໃຫ້ນັກຮຽນ.
5) ນັກຮຽນຂຽນໃສ່ຄຳອວຍພອນ ແລະ ຊື່ຂອງຜູ້ຮັບ ແລະ ຜູ້ສົ່ງໃສ່ໃນບັດອວຍພອນ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ຄູກຽມຊື່ນັກຮຽນທີ່ຂຽນດ້ວຍຕົວອັກສອນຄະຕະຄະນະເພື່ອຢາຍໃຫ້ນັກຮຽນແຕ່ລະຄົນ.
- ໃຫ້ຂໍ້ມູນກ່ຽວກັບວິທີເອົາບັດອວຍພອນໃຫ້ໝູ່ແບບຍີ່ປຸ່ນ ຄື ຈັບບັດດ້ວຍສອງມື, ປີ້ນເບື້ອງທີ່ມີຊື່ຜູ້ຮັບອອກແລ້ວຍື່ນໃຫ້. ຜູ້ໃຫ້ ເວົ້າ: おめでとう。ຜູ້ຮັບ ເວົ້າ: ありがとう。

❖ **<u>ທົບທວນຄືນບົດຮຽນ</u>**

1) ເວລາຖາມວັນເກີດໝູ່ ພາສາຍີ່ປຸ່ນເວົ້າແນວໃດ?
   ～さんの　たんじょうびは　いつですか。
2) ຕອບວັນທີ ແລະ ເດືອນໃດ.
   ～がつ　～にちです。
3) ເວລາຖາມ-ຕອບໝູ່ວ່າຢາກໄດ້ຫຍັງ ເວົ້າແນວໃດ?
   なにが　ほしいですか。
   ～が　ほしいです。
4) ໃຫ້ນັກຮຽນ 2-3 ຄູ່ ຖາມ-ຕອບ ໃຫ້ໝູ່ໃນຫ້ອງຟັງ.

**<u>Can-Do Check</u>**

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.

❀ ສິ່ງທີ່ນັກຮຽນມັດທະຍົມຕົ້ນຢາກໄດ້ໃນວັນເກີດ ❀

✕ ສິ່ງຕ່າງໆລຸ່ມນີ້ແມ່ນສິ່ງທີ່ນັກຮຽນມັດທະຍົມຕົ້ນປະເທດຕ່າງໆຕ້ອງການໃນວັນເກີດ. ເຈົ້າເດ ຕ້ອງການຫຍັງໃນວັນເກີດ? ສິ່ງທີ່ເຈົ້າຕ້ອງການຄືກັບສິ່ງທີ່ນັກຮຽນມັດທະຍົມຕົ້ນປະເທດອື່ນໆຕ້ອງການບໍ່ ຫຼື ຕ່າງກັນ? ເຈົ້າເຄີຍໄດ້ຮັບຫຍັງແດ່ໃນວັນເກີດ?

| にほん ຍີ່ປຸ່ນ (40 ຄົນ) | |
|---|---|
| ອັນດັບ1 | ເງິນ (5 ຄົນ) |
| ອັນດັບ2 | ເກມ (3 ຄົນ) |
| ອັນດັບ3 | ມືຖື, ຄອມພິວເຕີ, ເຄື່ອງນຸ່ງ, ປຶ້ມ, ຄົນຮັກ (ຕອບຂໍ້ລະ 2 ຄົນ) |

| フィリピン ຟີລິບປິນ (38 ຄົນ) | |
|---|---|
| ອັນດັບ1 | ມືຖື (17 ຄົນ) |
| ອັນດັບ2 | ຄອມພິວເຕີ / ໄອແພັດ (6 ຄົນ) |
| ອັນດັບ3 | ໄປຍີ່ປຸ່ນ (4 ຄົນ) |
| ອັນດັບ4 | ລົດໃຫຍ່, ລົດຈັກ, ສຸຂະພາບແຂງແຮງ (ຕອບຂໍ້ລະ 2 ຄົນ) |

| タイ ໄທ (32 ຄົນ) | |
|---|---|
| ອັນດັບ1 | ເງິນ (9 ຄົນ) |
| ອັນດັບ2 | ມືຖື, ຄອມພິວເຕີ, ເກີບ (ຕອບຂໍ້ລະ 4 ຄົນ) |
| ອັນດັບ5 | ເສື້ອ, ກ້ອງຖ່າຍຮູບ (ຕອບຂໍ້ລະ 2 ຄົນ) |

| インド ອິນເດຍ (59 ຄົນ) | |
|---|---|
| ອັນດັບ1 | ມືຖື (14 ຄົນ) |
| ອັນດັບ2 | ໝາ (8 ຄົນ) |
| ອັນດັບ3 | ລົດຈັກ (5 ຄົນ) |
| ອັນດັບ4 | ເກມPlay Station (4 ຄົນ) |
| ອັນດັບ5 | ໂມງApple, ລົດຖີບ, ຫຸ່ນຍົນປະກອບ (ຕອບຂໍ້ລະ 3 ຄົນ) |

ຄຳຕອບທີ່ບໍ່ຄືກັບປະເທດອື່ນ (ຕອບຂໍ້ລະ1 ຄົນ)

ໄມ້ຕີສັນມິດ, ກີຕາ, ອຸ່ຍ, ຈັດງານວັນເກີດ, ຮູດຊານລີງ, ຢາກມີອິກຊີວິດໜຶ່ງ, ຄວາມຮັກ, ຖົງວິເສດຂອງໂດລາເອະມອນ, ແຜ່ນຕິ່ຊູບ, ບັດຊື້ປຶ້ມ

ຄວາມສຸກ, ສັນຕິພາບ

ປຶ້ມກາຕູນ, ແມວ, ບັດອວຍພອນວັນເກີດ, ຕຸກກະຕາ, ໄປກິນເຂົ້າກັບຄອບຄົວ

ໄມ້ຖູ່, ໄມ້ຕີ cricket, ຄະແນນດີ, ຂໍໃຫ້ທຸກຄົນມີຄວາມສຸກ

10

**ຄຳລຳ** ❀ **ສິ່ງທີ່ນັກຮຽນມັດທະຍົມຕົ້ນຢາກໄດ້ໃນວັນເກີດ** ❀

❖ **ຄາດໝາຍ**

ໃຫ້ນັກຮຽນເຂົ້າໃຈວັດທະນະທຳທີ່ແຕກຕ່າງ ແລະ ຮູ້ຈຸດພິເສດຂອງແຕ່ລະປະເທດດ້ວຍການສັງເກດ ຄຳຕອບທີ່ແຕກຕ່າງພ້ອມທັງຄິດເຖິງເຫດຜົນທີ່ເຊື່ອມໂຍງກັບວັດທະນະທຳຂອງປະເທດນັ້ນໆ.

1) ສົນທະນາກັບນັກຮຽນກ່ຽວກັບຫົວຂໍ້ ແລະ ເນື້ອໃນ ຂອງຄຳລຳ.
2) ຖາມນັກຮຽນໃນຫ້ອງ 2-3 ຄົນ ວ່າຢາກໄດ້ຫຍັງໃນວັນເກີດ?
3) ໃຫ້ນັກຮຽນເຮັດກິດຈະກຳເປັນກຸ່ມເພື່ອເບິ່ງຜົນສຳຫຼວດຂອງປະເທດອື່ນໆວ່າ ຄືກັນ ແລະ ແຕກຕ່າງກັນແນວໃດ? ຜົນສຳຫຼວດຂອງແຕ່ລະປະເທດມີຈຸດພິເສດຫຍັງແດ່?.
   ຕົວຢ່າງ: ປະເທດຍີ່ປຸ່ນ ສຳຫຼວດນັກຮຽນຈັກຄົນ? ອັນດັບ 1, 2, 3 ແມ່ນຫຍັງ? ນອກຈາກນັ້ນມີຄຳຕອບຫຍັງແດ່? ສິ່ງທີ່ໜ້າສົນໃຈມີຫຍັງແດ່? ຍ້ອນຫຍັງ? ເປັນຫຍັງສ່ວນຫຼາຍຈຶ່ງຢາກໄດ້ສິ່ງນັ້ນ? ໃຫ້ນັກຮຽນສົນທະນາກັນ.
4) ໃຫ້ນັກຮຽນແຕ່ລະກຸ່ມນຳສະເໜີຈຸດພິເສດຂອງຄຳຕອບແຕ່ລະປະເທດ ໂດຍສັງເກດຄຳຕອບອື່ນໆ ທີ່ບໍ່ຢູ່ໃນການຈັດລຳດັບ ພ້ອມທັງຄິດຫາເຫດຜົນຂອງຄຳຕອບນັ້ນໆ. ແຕ່ລະຄຳຕອບມີຈຸດພິເສດແນວໃດ?
5) ນອກຈາກນັ້ນ, ຄູອະທິບາຍສິ່ງທີ່ແປກ ເຊັ່ນ: "ບັດຊື້ປຶ້ມ" ແມ່ນບັດທີ່ໃຊ້ແທນເງິນສົດ, ສາມາດນຳໄປຊື້ປຶ້ມໃນຮ້ານປຶ້ມຕ່າງໆໄດ້. ໄມ້ຕີກຣິແກັດແມ່ນໃຊ້ໃນກິລາປະເພດໜຶ່ງທີ່ນິຍົມຫຼິ້ນຢູ່ປະເທດ ອິນເດຍ.



# だい１２か　しょくせいかつ (ພຶດຕິກຳການກິນ)



ຄັ້ງທີ 1




**ໜ້າປົກ**

❖ **ຄາດໝາຍ**

ໃຫ້ນັກຮຽນທົບທວນຄືນກ່ຽວກັບພຶດຕິກຳການກິນ, ກິນຫຍັງ? ດື່ມຫຍັງ? ມັກກິນ ແລະ ດື່ມເປັນປະຈຳ ຫຼື ບໍ່?

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບຫົວບົດ ແລະ ເນື້ອໃນໂດຍການເບິ່ງຮູບຢູ່ໜ້າປົກ.
2) ສົນທະນາກັບນັກຮຽນກ່ຽວກັບອາຫານ ແລະ ເຄື່ອງດື່ມທີ່ມັກກິນ ແລະ ດື່ມ ພ້ອມທັງພຶດຕິກຳການກິນດື່ມ.
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do ໃນບົດຮຽນ.
   1. ສາມາດຖາມ-ຕອບວ່າ ກິນ(ອາຫານ)ຫຍັງ
   2. ສາມາດຖາມ-ຕອບກ່ຽວກັບພຶດຕິກຳການກິນໄດ້



**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູສົນທະນາກ່ຽວກັບອາຫານ ແລະ ເຄື່ອງດື່ມທີ່ນັກຮຽນມັກກິນ ແລະ ດື່ມເປັນປະຈຳ. ພຶດຕິກຳການກິນ ໝາຍເຖິງການກິນອາຫານ ຫຼື ດື່ມເຄື່ອງດື່ມນັ້ນເປັນປະຈຳ ຫຼື ບໍ່?




**1. ກິນຫຍັງ?**

ききましょう **"ອາຫານ"**

❖ **ຄາດໝາຍ**:

ໃຫ້ນັກຮຽນຮູ້ຄວາມໝາຍຂອງຄຳສັບກ່ຽວກັບອາຫານ ແລະ ຝຶກອອກສຽງ.

❖ **ຂັ້ນຕອນການສອນ**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໃນບົດຮຽນ.
2) ໃຫ້ນັກຮຽນເບິ່ງຮູບແລ້ວຄູຖາມກ່ຽວກັບຄວາມໝາຍຂອງຄໍາສັບ.
3) ຟັງ CD ພ້ອມທັງເບິ່ງຮູບອາຫານ.
4) ຟັງ CD ຖາມກ່ຽວກັບສຽງ ຫຼື ຄໍາສັບທີ່ໄດ້ຍິນ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄໍາສັບ, ນັກຮຽນຝຶກເວົ້າຄໍາສັບ.
7) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄໍາສັບດ້ວຍພາສາລາວ.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ເອົາໃຈໃສ່ການອອກສຽງອາຫານທີ່ຂຽນດ້ວຍຕົວອັກສອນຄະຕະຄະນະ ແມ່ນໃຫ້ອອກສຽງແຕ່ລະຈັງຫວະສຽງຕາມຕົວອັກສອນແຕ່ລະຕົວອັກສອນ ບໍ່ໃຫ້ອອກສຽງແບບພາສາລາວ. ເຊັ່ນ:カオパット Kaopatto ເຂົ້າຜັດ

はなしましょう **ຖາມໝູ່ "ມັກກິນຫຍັງ"**

❖ **ຄາດໝາຍ**: ໃຫ້ນັກຮຽນຮູ້ຄໍາສັບກ່ຽວກັບອາຫານ ແລະ ສາມາດຖາມ-ຕອບກ່ຽວກັບອາຫານທີ່ຕົນເອງມັກເປັນພາສາຍີ່ປຸ່ນ.

1) ຄູສົນທະນາຕົວຢ່າງໃຫ້ນັກຮຽນເບິ່ງ.

ຕົວຢ່າງ: A: ～さん、どんな　たべものが　すきですか。

B: にく　と　やさい　が　すきです。

～と～ ໝາຍເຖິງມີ ອາຫານທີ່ມັກ 2 ຢ່າງຂຶ້ນໄປ ເຊັ່ນ: ຊີ້ນ ກັບ ຜັກ.

2) ຝຶກຫັດ ຄູ-ນັກຮຽນ

- ຄູຖາມນັກຮຽນ ～さん、どんな　たべものが　すきですか。ແລ້ວຍົກຮູບອາຫານໃຫ້ເບິ່ງ.
- ນັກຮຽນເບິ່ງຮູບແລ້ວຕອບ ～が　すきです。
- ຄູຍົກແຕ່ລະຮູບແລ້ວຕັ້ງຄໍາຖາມ; ໃຫ້ນັກຮຽນທັງໝົດຕອບເປັນພາສາຍີ່ປຸ່ນ.
- ໃຫ້ນັກຮຽນແຕ່ລະຄົນເວົ້າ ຫຼື ເວົ້າເປັນແຖວ, ເວົ້າເປັນກຸ່ມ.

3) ຝຶກຫັດ ນັກຮຽນ-ນັກຮຽນ

- ນັກຮຽນຝຶກເປັນຄູ່: A ຖາມ, B ຕອບ.
- ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຝຶກເວົ້າໂດຍເລີ່ມຈາກອາຫານເບື້ອງດຽວ; ຫຼັງຈາກນັ້ນ ຈຶ່ງໃຫ້ນັກຮຽນເວົ້າອາຫານຫຼາຍເບື້ອງດ້ວຍການນຳໃຊ້ ～と～
- ຄູກະກຽມຊື່ອາຫານທີ່ຄິດວ່ານັກຮຽນລາວມັກກິນເຊັ່ນ: ໝີ່ ラーメン, ຂົ້ວໄຂ່ たまごやき...

きききましょう　"のみもの"




❖ **<u>ຄາດໝາຍ</u>**:

ໃຫ້ນັກຮຽນຮູ້ຄວາມໝາຍຂອງຄຳສັບກ່ຽວກັບເຄື່ອງດື່ມ ແລະ ຝຶກອອກສຽງ.

❖ **<u>ຂັ້ນຕອນການສອນ</u>**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໃນປຶ້ມຮຽນ.
2) ຄູໃຫ້ນັກຮຽນເບິ່ງຮູບແລ້ວຖາມກ່ຽວກັບຄວາມໝາຍຂອງຄຳສັບ.
3) ຟັງ CD ພ້ອມທັງເບິ່ງຮູບເຄື່ອງດື່ມ.
4) ຟັງ CD ແລ້ວຖາມກ່ຽວກັບສຽງ ຫຼື ຄຳສັບທີ່ໄດ້ຍິນ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄຳສັບ, ນັກຮຽນຝຶກເວົ້າຄຳສັບ.
7) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄຳສັບດ້ວຍພາສາລາວ.



**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ເອົາໃຈໃສ່ການອອກສຽງອາຫານທີ່ຂຽນດ້ວຍຕົວອັກສອນຄະຕະຄະນະ ແມ່ນໃຫ້ອອກສຽງແຕ່ລະຈັງຫວະສຽງຕາມຕົວອັກສອນແຕ່ລະຕົວອັກສອນ.

  ເຊັ່ນ: コーヒー Koohii ກາເຟ

## はなしましょう **ຖາມໝູ່ "ມັກດື່ມຫຍັງ"**

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຮູ້ຄຳສັບກ່ຽວກັບເຄື່ອງດື່ມ ແລະ ສາມາດຖາມ-ຕອບກ່ຽວກັບເຄື່ອງດື່ມທີ່ຕົນເອງມັກເປັນພາສາຍີ່ປຸ່ນ.

1) ຄູ-ຄູ
   - ສົນທະນາຕົວຢ່າງໃຫ້ນັກຮຽນເບິ່ງ.

   <u>ຕົວຢ່າງ</u>: A: ～さん、どんな　のみものが　すきですか。

   B: ジュース　が　すきです。

2) ຝຶກຫັດ ຄູ-ນັກຮຽນ
   - ຄູຖາມນັກຮຽນ ～さん、どんな　のみものが　すきですか。ແລ້ວຍົກຮູບອາຫານໃຫ້ນັກຮຽນເບິ່ງ.
   - ນັກຮຽນເບິ່ງຮູບແລ້ວຕອບ ～が　すきです。
   - ຄູຍົກແຕ່ລະຮູບແລ້ວຕັ້ງຄຳຖາມ; ໃຫ້ນັກຮຽນທັງໝົດຕອບເປັນພາສາຍີ່ປຸ່ນ.
   - ໃຫ້ນັກຮຽນແຕ່ລະຄົນເວົ້າ ຫຼື ເວົ້າເປັນແຖວ, ເວົ້າເປັນກຸ່ມ.

3) ຝຶກຫັດ ນັກຮຽນ-ນັກຮຽນ
   - ນັກຮຽນຝຶກຫັດເປັນຄູ່: A ຖາມ, B ຕອບ.
   - ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

4) ຄູອະທິບາຍຄຳສັບເພີ່ມຕື່ມ: あさ ຕອນເຊົ້າ; ひる ຕອນສວາຍ, ຕອນທ່ຽງ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຄູກະກຽມຊື່ເຄື່ອງດື່ມທີ່ຄິດວ່ານັກຮຽນລາວມັກ ເຊັ່ນ: ແປັບຊີ ペプシ, ນໍ້າໝາກພ້າວココナッツジュース...

| | たべます | のみます |
|---|---|---|
| 1 | パン　と　くだもの | コーヒー |
| 2 | おかゆ | とうにゅう |
| 3 | カオパット | みず |
| 4 | ごはん　と　にく　と　やさい | ジュース |




## かいわ　"ກິນຫຍັງ? ດື່ມຫຍັງ?

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ຖາມ-ຕອບວ່າຈະກິນຫຍັງ ແລະ ດື່ມຫຍັງ.

❖ **<u>ຂັ້ນຕອນການສອນ</u>**

1) ຖາມກ່ຽວກັບຮູບ ແລະ ສະຖານນະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບຫຍັງ? ທ້າວແກ້ວ ລາວຈະກິນ ແລະ ດື່ມຫຍັງ?
2) ນັກຮຽນສັງເກດຮູບພາບ ແລະ ຕອບຕາມຄວາມຄິດ.
3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
4) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ.
5) ຟັງ CD ແລ້ວຝຶກອອກສຽງ.
6) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
7) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.



## はなしましょう　"ຕອນທ່ຽງເຈົ້າກິນຫຍັງ ແລະ ດື່ມຫຍັງ?"

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຝຶກຖາມ-ຕອບນຳໝູ່ຢູ່ໃນຫ້ອງ 3 ຄົນ ກ່ຽວກັບອາຫານ ແລະ ເຄື່ອງດື່ມ.

1) ຂຽນກ່ຽວກັບອາຫານ ແລະ ເຄື່ອງດື່ມຂອງຕົນເອງໃສ່ຕາຕະລາງ.
2) ຖາມໝູ່ໃນຫ້ອງ 3 ຄົນ ແລ້ວ ຂຽນໃສ່ຕາຕະລາງ.
   - ນັກຮຽນຝຶກຫັດເປັນຄູ່: A ຖາມ, B ຕອບ.

ຕົວຢ່າງ:　A:　ひる、なにを　たべますか。／のみますか。

　　　　　B:　～を　たべます。／のみます。

ຝຶກຖາມໝູ່ໃນຫ້ອງ ຕອນທ່ຽງ ກິນ ແລະ ດື່ມຫຍັງ?

- ໃຫ້ນັກຮຽນໄປຖາມໝູ່ 3 ຄົນ.

  <u>ຕົວຢ່າງ</u>: A さん: ひる、なにを　たべますか。

  B さん: パンを　たべます。

  A さん: なにを　のみますか。

  B さん: ぎゅうにゅうを　のみます。

| | たべます tabemasu | のみます nomimasu |
|---|---|---|
| わたし watashi | ごはんとたまご | ジュース |
| B さん san | パン | ぎゅうにゅう |

3) ໃຫ້ນັກຮຽນ 2-3 ຄົນ ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຄູຍົກຮູບພາບອາຫານ ແລະ ເຄື່ອງດື່ມ ແລ້ວໃຫ້ນັກຮຽນເວົ້າ ເຊັ່ນ: ຍົກຮູບ "ເຂົ້າ" ນັກຮຽນເວົ້າ "ごはんを　たべます。" ຍົກຮູບ "ນ້ຳ" ນັກຮຽນເວົ້າ "みずを のみます。"
- ວຽກບ້ານ: ໃຫ້ນັກຮຽນທວນຄືນ ແລະ ຈື່ການເວົ້າ "～を　たべます／のみます。"

✿❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀✿

ຄັ້ງທີ 2

## ききましょう "ປົກກະຕິກິນເຂົ້າເຊົ້າບໍ່?

❖ <u>**ຄາດໝາຍ**</u>

ໃຫ້ນັກຮຽນສາມາດເວົ້າພຶດຕິກຳການກິນ ແລະ ດື່ມ ໂດຍນຳໃຊ້ຄຳສັບいつも、ときどき、あまり、ぜんぜん

❖ <u>**ຂັ້ນຕອນການສອນ**</u>

1) ທວນຄືນຄຳສັບກ່ຽວກັບອາຫານ ແລະ ເຄື່ອງດື່ມ.

- ຍົກຮູບອາຫານ ແລະ ເຄື່ອງດື່ມ ແລ້ວໃຫ້ນັກຮຽນເວົ້າຄຳສັບເປັນພາສາຍີ່ປຸ່ນ.
- ໃຫ້ນັກຮຽນຝຶກຖາມ-ຕອບກ່ຽວກັບອາຫານ ແລະ ເຄື່ອງດື່ມ.

2) ສົນທະນາກ່ຽວກັບຕາຕະລາງ ແລະ ຄວາມໝາຍຂອງຮູບເຄື່ອງດື່ມ ແລະ ຄວາມໝາຍຂອງ いつも、ときどき、あまり、ぜんぜん
3) ໃຫ້ນັກຮຽນຟັງ CD ໂດຍເນັ້ນຄໍາສັບທີ່ໄດ້ຍິນ ແລະ ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ.
4) ຄູຖາມກ່ຽວກັບສຽງ ຫຼື ຄໍາສັບທີ່ໄດ້ຍິນ ແລະ ຄວາມໝາຍໃນບົດສົນທະນາ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.

"あさ、いつも　ぎゅうにゅうを　のみます。"

"あさ、ときどき　ジュースを　のみます。"

"あさ、あまり　コーヒーを　のみません。"

"あさ、ぜんぜん　おちゃを　のみません。"

6) ຄູອະທິບາຍການນໍາໃຊ້

いつも　itsumo　( ປົກກະຕິ )

ときどき　tokidoki　( ບາງຄັ້ງຄາວ )

<u>ຮູບປະຕິເສດ</u>

あまり～ません　amari ～ masen　( ບໍ່...ປານໃດ )

ぜんぜん～ません　zenzen ～ masen　( ບໍ່...ເລີຍ )

**<u>ຂໍ້ຄວນເອົາໃຈໃສ່ສໍາລັບຄູ</u>**

- ຄູອະທິບາຍໃຫ້ນັກຮຽນຮູ້ເຖິງລະດັບຄວາມແຕກຕ່າງໃນການໃຊ້ いつも、ときどき、あまり、ぜんぜん ໂດຍສະເພາະເວລາເປັນຮູບປະຕິເສດ, ທ້າຍປະໂຫຍກຈະປ່ຽນຮູບ.



## はなしましょう **"ເວົ້າພຶດຕິກໍາການກິນ ແລະ ດື່ມ"**

❖ **<u>ຂັ້ນຕອນການສອນ</u>**

1) ຄູເວົ້າບົດຕົວຢ່າງໃຫ້ນັກຮຽນຟັງ

わたしは　いつも　みずを　のみます。
ときどき　コーヒーを　のみます。
あまり　ぎゅうにゅうを　のみません。
ぜんぜん　おちゃを　のみません。

2) ຊອກຫາສິ່ງທີ່ດື່ມເປັນປົກກະຕິ, ດື່ມບາງຄັ້ງຄາວ, ບໍ່ຄ່ອຍດື່ມ ແລະ ບໍ່ດື່ມເລີຍແລ້ວຝຶກເວົ້າໃຫ້ໝູ່ຟັງ.

いつも　itsumo　(　　　　　　)
ときどき　tokidoki　(　　　　　　)
あまり　amari　(　ぎゅうにゅう　)
ぜんぜん　zenzen　(　おちゃ　　)

<u>ຕົວຢ່າງ</u>:　あまり　ぎゅうにゅうを　のみません。
　　　　ぜんぜん　おちゃを　のみません。

- ຟັງ CD ເພື່ອຢາກຮູ້ວ່າ ກິນເຂົ້າເຊົ້າ ຫຼື ບໍ່ກິນ ແລ້ວໝາຍ ○ ໃສ່ຕາຕະລາງ

| | いつも<br>itsumo | ときどき<br>tokidoki | あまり<br>amari | ぜんぜん<br>zenzen |
|---|---|---|---|---|
| 1 | ○（パン） | | | |
| 2 | | ○（おかゆ） | | |
| 3 | | | | ○（コーヒー） |
| 4 | | | ○ | |

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນຈຳແນກການນຳໃຊ້ いつも、ときどき、あまり、ぜんぜん ໄດ້.

### かいわ　"ຖາມ-ຕອບພຶດຕິກຳການກິນ ແລະ ດື່ມ"




❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຮູ້ຈຳແນກການນຳໃຊ້いつも、ときどき、あまり、ぜんぜん ໃນປະໂຫຍກ ແລະ ໃນສະຖານະການຕ່າງໆ.

❖ **<u>ຂັ້ນຕອນການສອນ</u>**

1) ສົນທະນາກ່ຽວກັບຮູບ ແລະ ສະຖານະການ ເຊັ່ນ: ທ້າວ ແກ້ວ ຄິດຫຍັງ? ມີອາຫານຫຍັງແດ່? ເຂົາເຈົ້າລົມກ່ຽວກັບ ອາຫານຫຍັງແດ່?

2) ນັກຮຽນສັງເກດຮູບພາບ ແລະ ຕອບຕາມຄວາມຄິດ.

3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.

4) ຖາມກ່ຽວກັບຄໍາສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ.

5) ຟັງ CD ແລ້ວຝຶກອອກສຽງ.

6) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.

7) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

8) ຝຶກຖາມໝູ່ວ່າ ປົກກະຕິກິນເຂົ້າເຊົ້າບໍ່? ກິນຫຍັງ? ຖາມໝູ່ໃຫ້ໄດ້ 3 ຄົນ.

<u>ຕົວຢ່າງ</u>: A: _____さん、いつも　あさごはんを　たべますか。
B: はい、いつも　たべます。
A: なにを　たべますか。
B: _____と_____を　たべます。

- ໃຫ້ນັກຮຽນແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ຟັງໃນຫ້ອງ.

**<u>ຂໍ້ຄວນເອົາໃຈໃສ່ສໍາລັບຄູ</u>**

- ໃຫ້ນັກຮຽນຝຶກຖາມ-ຕອບປະໂຫຍກປະຕິເສດ ເພື່ອໃຫ້ສາມາດນໍາໃຊ້ໄດ້ຢ່າງຖືກຕ້ອງ




よみましょう　15

ອາຫານເຊົ້າຂອງ 2 ຄົນນີ້ ແມ່ນຫຍັງ? ເລືອກຄໍາຕອບຈາກ A-D.

( )
わたしは　いつも　あさごはんを　たべます。
たまごと　やさいと　くだものを　たべます。
ぎゅうにゅうを　のみます。
わたしは　くだものが　すきです。

( )
わたしは　ときどき　あさごはんを　たべます。
おかゆと　やさいを　たべます。
おちゃを　のみます。
ひる　カオチーパテを　たべます。

A　B　C　D

17

## よみましょう **"ອາຫານເຊົ້າ"**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນອ່ານເອົາຂໍ້ມູນ ແລະ ຈັບໃຈຄວາມສໍາຄັນຂອງບົດອ່ານໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ຄູຖາມນັກຮຽນກ່ຽວກັບຮູບ ແລະ ບົດອ່ານ.

2) ໃຫ້ນັກຮຽນສັງເກດເບິ່ງຮູບມີຫຍັງແດ່? ມີອາຫານຫຍັງແດ່? ຮູບອາຫານຄືກັນ ແລະ ຕ່າງກັນແນວໃດ?.

3) ນັກຮຽນສັງເກດເບິ່ງຮູບແລ້ວຕອບ.

4) ນັກຮຽນອ່ານບົດແລ້ວຂີດກ້ອງເອົາຄໍາສັບຫຼັກທີ່ເປັນຄໍາຕອບ ແລະ ກົງກັບອາຫານທີ່ມີຢູ່ໃນຮູບ (ໃຫ້ເວ ລາປະມານ 5 ນາທີ).
5) ຟັງ CD ແລ້ວຝຶກເວົ້າອອກສຽງ.


( C )

わたしは　いつも　あさごはんを　たべます。
たまごと　やさいと　くだものを　たべます。
ぎゅうにゅうを　のみます。
わたしは　くだものが　すきです。


( B )

わたしは　ときどき　あさごはんを　たべます。
おかゆと　やさいを　たべます。
おちゃを　のみます。
ひる、カオチーパテを　たべます。

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ບໍ່ໃຫ້ແປບົດອ່ານເປັນພາສາລາວ; ໃຫ້ນັກຮຽນຄິດ ຫຼື ຈິນຕະນາການຈາກຮູບ ແລະ ສະຖານນະການນັ້ນ.
- ສ້າງທັກສະການອ່ານຈັບໃຈຄວາມ, ຮູ້ຄໍາສັບຫຼັກດ້ວຍການສັງເກດຜ່ານຮູບ ແລະຄໍາສັບທີ່ໄດ້ ຮຽນຜ່ານມາ.

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຢາກຖາມໝູ່ວ່າ "ປົກກະຕິກິນເຂົ້າເຊົ້າບໍ່?" ພາສາຍີ່ປຸ່ນເວົ້າແນວໃດ?
- ຖ້າເວົ້າວ່າ "ກິນເປັນປົກກະຕິ", "ກິນບາງຄັ້ງຄາວ", "ບໍ່ຄ່ອຍກິນປານໃດ", "ບໍ່ກິນເລີຍ" ພາສາຍີ່ປຸ່ນເວົ້າແນວໃດ?



ຄັ້ງທີ 3

🔔かつどう ກິດຈະກຳ

**ຈັດລຳດັບອາຫານທ່ຽງ**

① ແບ່ງເປັນກຸ່ມ ກຸ່ມລະ 8-10 ຄົນ.
② ສົນທະນາກ່ຽວກັບອາຫານທ່ຽງວ່າ ກິນຫຍັງ? ດື່ມຫຍັງ?
③ ຮຽງລຳດັບ ກິນ ແລະ ດື່ມຫຍັງຫຼາຍ.
④ ນຳສະເໜີ.

## かつどう **"ຈັດລຳດັບອາຫານທ່ຽງ"**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຝຶກຖາມ-ຕອບ ແລະ ເຮັດວຽກຮ່ວມກັນເປັນກຸ່ມເພື່ອສັງລວມຄຳຕອບ ແລ້ວຂຶ້ນນຳສະເໜີ.

❖ **<u>ທວນຄືນບົດຮຽນຜ່ານມາ</u>**

ໃຫ້ທວນຄືນບົດຮຽນຜ່ານມາ ໂດຍຖາມຄືນກ່ຽວກັບຄຳສັບ ແລະ ປະໂຫຍກໃນການຖາມ-ຕອບພຶດຕິກຳ ການກິນ ແລະ ດື່ມ.

❖ **<u>ຂັ້ນຕອນການສອນ</u>**

1) ຈັດແບ່ງກຸ່ມນັກຮຽນເພື່ອສົນທະນາກ່ຽວກັບເຂົ້າທ່ຽງ ກິນຫຍັງ? ປົກກະຕິກິນ/ ດື່ມຫຍັງ?
ຕົວຢ່າງ: A: ひる、なにを　たべますか。
B: いつも　カオパットを　たべます。

2) ຄູຍາຍເຈ້ຍໃຫ້ແຕ່ລະກຸ່ມຂຽນລຳດັບອາຫານ ແລະ ເຄື່ອງດື່ມທີ່ໃນກຸ່ມມີຜູ້ກິນ ແລະ ດື່ມຫຼາຍກວ່າໝູ່ ຕາມລຳດັບ 1, 2, 3.
3) ຖ້າຂຽນຊື່ອາຫານເປັນອັກສອນຄະຕະນະບໍ່ໄດ້ເທື່ອ; ສາມາດຂຽນເປັນພາສາລາວກໍໄດ້ ເຊັ່ນ: カオパット "ເຂົ້າຜັດ". ຕົວຢ່າງ: ເຈ້ຍ A4 1 ໃບ ນັກຮຽນຂຽນດັ່ງນີ້:



なにを　たべますか。
1. カオパット　（ມີຈັກຄົນ）
2. パン　（ມີຈັກຄົນ）
3. にく　（ມີຈັກຄົນ）

なにを　のみますか。
1. みず　（ມີຈັກຄົນ）
2. ジュース　（ມີຈັກຄົນ）
3. ぎゅうにゅう　（ມີຈັກຄົນ）

4) ຫຼັງຈາກແຕ່ລະກຸ່ມກະກຽມໄດ້ແລ້ວ ໃຫ້ຂຶ້ນນຳສະເໜີຢູ່ໜ້າກະດານ. ພາຍຫຼັງເລີກຮຽນໃຫ້ເອົາຕິດໄວ້ຝາຫ້ອງຮຽນຕາມເຂດທີ່ຄູກຳນົດ.

ຕົວຢ່າງ: A: ひる、なにを　たべますか。

B: １．カオパットを　たべます。　４にんです。

２．パンを　たべます。　ふたりです。

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ນັກຮຽນຮູ້ວິທີເວົ້າໃນການນຳສະເໜີດ້ວຍການຍົກຕົວຢ່າງ ຫຼື ຄູເວົ້າເປັນຕົວຢ່າງໃຫ້ເບິ່ງກ່ອນ ເພື່ອໃຫ້ນັກຮຽນໄດ້ນຳສະເໜີງ່າຍຂຶ້ນ.

❖ **ທົບທວນຄືນບົດຮຽນ**

- ໃຫ້ຖາມໝູ່ທີ່ນັ່ງທາງຂ້າງວ່າ "ປົກກະຕິ ກິນເຂົ້າເຊົ້າບໍ່? ຖ້າກິນ, ກິນຫຍັງ? "

いつも　あさごはんを　たべますか。

なにを　たべますか。

- ໃຫ້ຖາມໝູ່ທີ່ນັ່ງທາງຂ້າງວ່າ "ດື່ມນ້ຳຊາເປັນປະຈຳບໍ່? "

いつも　おちゃを　のみますか。

- ຄຳຕອບ "ບໍ່, ບໍ່ດື່ມນ້ຳຊາເລີຍ"

ぜんぜん　おちゃを　のみません。

**Can-Do Check**

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຍາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.


❀ ອາຫານທ່ຽງຂອງນັກຮຽນຍີ່ປຸ່ນ ❀

✖ ຂ້າງລຸ່ມນີ້ແມ່ນຕົວຢ່າງອາຫານທ່ຽງຂອງນັກຮຽນຍີ່ປຸ່ນ. ເຈົ້າເດ, ເອົາເຂົ້າມາກິນຢູ່ໂຮງຮຽນບໍ່? ຫຼື ກິນຢູ່ຮ້ານອາຫານ ຫຼື ກັບເມືອກິນຢູ່ເຮືອນ. ອາຫານທ່ຽງຂອງນັກຮຽນຍີ່ປຸ່ນກັບຂອງເຈົ້າຄືກັນບໍ່ ຫຼື ບໍ່ຄື? ແມ່ນຫຍັງທີ່ຄືກັນ ແລະ ແມ່ນຫຍັງທີ່ຕ່າງກັນ? ເປັນຫຍັງຈຶ່ງແຕກຕ່າງກັນ?

★ ຜູ້ໃຫ້ການຊ່ວຍເຫຼືອຮູບພາບປະກອບ:

Tokyo Metropolitan Tachikawa Kokusai Secondary Education School

20

**<u>ຄຳລຳ</u> ❀ ອາຫານທ່ຽງຂອງນັກຮຽນຍີ່ປຸ່ນ ❀**

❖ **ຄາດໝາຍ**

ໃຫ້ນັກຮຽນເຂົ້າໃຈວັດທະນະທຳການກິນຂອງລາວ ແລະ ຍີ່ປຸ່ນ; ໃຫ້ຮູ້ຈຸດແຕກຕ່າງ ແລະ ຈຸດພິເສດຂອງແຕ່ລະປະເທດ.

❖ **ຂັ້ນຕອນການສອນ**

ກ່ອນຈະເຂົ້າໄປເບິ່ງບົດກ່ຽວກັບອາຫານທ່ຽງຂອງນັກຮຽນຍີ່ປຸ່ນ ໃຫ້ຄູທວນຄືນການຈັດອັນດັບອາຫານທ່ຽງຂອງນັກຮຽນໃນຫ້ອງວ່າ ແມ່ນຫຍັງທີ່ນັກຮຽນມັກກິນໃນເວລາພັກທ່ຽງຫຼາຍກວ່າໝູ່? ໃຫ້ສົນທະນາກັບນັກຮຽນກ່ອນເຂົ້າເນື້ອໃນຄຳລຳ.

1) ໃນໂຮງຮຽນປະຖົມ ສ່ວນຫຼາຍນັກຮຽນຈະກິນເຂົ້າທີ່ໂຮງຮຽນກຽມໄວ້ໃຫ້ ແລະ ເວລາກິນຈະຕ້ອງໄດ້ໃສ່ຊຸດກັນເປື້ອນ ແລະ ໝວກເພື່ອຮັກສາຄວາມສະອາດ. ນອກຈາກນັ້ນ, ນັກຮຽນຈະແບ່ງໜ້າທີ່ກັນເປັນຈຸເພື່ອຕັກເຂົ້າ ແລະ ອາຫານໃຫ້ໝູ່ ພ້ອມທັງເອົາຖ້ວຍບ່ວງທີ່ກິນແລ້ວໄປໄວ້ເຮືອນຄົວ ລວມຂອງໂຮງຮຽນ. ເວລາກິນນັກຮຽນຈະນັ່ງກິນເປັນຈຸ ໂດຍປິ່ນໂຕະເຂົ້າຫາກັນ. ຄູປະຈຳຫ້ອງກໍຈະມານັ່ງກິນນຳນັກຮຽນ.
2) ສະພາບການກິນເຂົ້າທ່ຽງຂອງນັກຮຽນຊັ້ນມັດທະຍົມຕອນຕົ້ນ ແລະ ຕອນປາຍ ບາງໂຮງຮຽນກໍຈະຄືກັບໂຮງຮຽນປະຖົມ; ແຕ່ໂຮງຮຽນສ່ວນຫຼາຍນັກຮຽນຈະເອົາເຂົ້າກ່ອງມາກິນເອງຢູ່ໂຮງຮຽນ. ເຂົາເຈົ້າຈະນັ່ງເປັນກຸ່ມຕາມໃຈ ແລະ ກິນເຂົ້າຮ່ວມກັນໃນຫ້ອງຮຽນ.
3) ບາງໂຮງຮຽນກໍຈະມີໂຮງອາຫານ ຫຼື ບ່ອນຂາຍເຂົ້າກ່ອງຂອງໂຮງຮຽນທີ່ກຳນົດໄວ້ສະເພາະໃນຕອນທ່ຽງ; ບໍ່ໄດ້ເປີດປະຈຳ ເພື່ອໃຫ້ນັກຮຽນໄດ້ເລືອກຊື້ກິນຕາມໃຈ ຄືດັ່ງຮູບ 3 ແລະ 4. ສ່ວນຫຼາຍຈະຂາຍເຂົ້າກ່ອງ, ເຂົ້າປັ້ນ ແລະ ແຊນວິດຕ່າງໆ.
4) ນອກຈາກນັ້ນ, ເຂົ້າກ່ອງຂອງນັກຮຽນຍີ່ປຸ່ນຈະມີສີສັນສົດໃສ, ມີຕຸກກະຕາໜ້າຮັກເພື່ອຊວນໃຫ້ຢາກກິນ ແລະ ໃຫ້ໄດ້ອາຫານຄົບຫ້າໝູ່ຕາມຫຼັກໂພຊະນາການອີກດ້ວຍ.



# だい１３か　がっこうあんない　( ການແນະນຳໂຮງຮຽນ )



## ໜ້າປົກ

ຄັ້ງທີ 1




❖ **ຄາດໝາຍ**

ໃຫ້ນັກຮຽນສາມາດລົມທະນາກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນ ພ້ອມທັງແນະນຳສະຖານທີ່ດັ່ງກ່າວ.

❖ **ຂັ້ນຕອນການສອນ**

1) ລົມທະນາກ່ຽວກັບເນື້ອໃນຂອງບົດຮຽນດ້ວຍການເບິ່ງຮູບຢູ່ໜ້າປົກ ແລ້ວຈິນຕະນາການເຖິງສະຖານະການ ແລະ ສິ່ງທີ່ຈະໄດ້ຮຽນໃນບົດນີ້.
2) ລົມທະນາກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນ.
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do.
    1. ສາມາດແນະນຳສະຖານທີ່ຕ່າງໆໃນໂຮງຮຽນໄດ້
    2. ສາມາດຖາມ-ຕອບວ່າ ສະຖານທີ່ຕ່າງໆໃນໂຮງຮຽນຢູ່ໃສ



**ຂໍ້ຄວນເອົາໃຈໃສ່ສຳລັບຄູສອນ**

- ລົມທະນາກ່ຽວກັບສະຖານທີ່ໃນໂຮງຮຽນຂອງຕົນເອງ ວ່າມີຫ້ອງຫຍັງແດ່? ຕັ້ງຢູ່ໃສ?




1. **ນີ້ແມ່ນໂຮງຮຽນຂອງຂ້ອຍ**

ききましょう **"ສະຖານທີ່ຕ່າງໆໃນໂຮງຮຽນ"**

❖ **ຄາດໝາຍ**:

ໃຫ້ນັກຮຽນຝຶກອອກສຽງ ແລະ ຮຽນຄຳສັບກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນ.

❖ **<u>ຂັ້ນຕອນການສອນ</u> "ສະຖານທີ່ຕ່າງໆໃນໂຮງຮຽນ"**

1) ຄູພານັກຮຽນສົນທະນາກ່ຽວກັບຮູບຂອງສະຖານທີ່ຕ່າງໆໃນໂຮງຮຽນ.
2) ໃຫ້ນັກຮຽນເບິ່ງຮູບແລ້ວຖາມກ່ຽວກັບຄວາມໝາຍຂອງຄຳສັບ.
3) ຟັງ CD ພ້ອມທັງເບິ່ງຮູບສະຖານທີ່ຕ່າງໆ.
4) ຟັງ CD ແລ້ວຖາມກ່ຽວກັບສຽງ ຫຼື ຄຳສັບທີ່ໄດ້ຍິນ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄຳສັບໃຫ້ນັກຮຽນຝຶກເວົ້າຄຳສັບ.
7) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄຳສັບດ້ວຍພາສາລາວ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຄູອະທິບາຍບາງສະຖານທີ່ໃນຄຳສັບໃໝ່ທີ່ອາດຈະບໍ່ມີຢູ່ໃນໂຮງຮຽນ ດ້ວຍການໃຊ້ຮູບ ຫຼື ສື່ການສອນເຂົ້າຊ່ວຍເຮັດໃຫ້ນັກຮຽນເຂົ້າໃຈງ່າຍຂຶ້ນ ເຊັ່ນ: りかしつ ຫ້ອງທົດລອງວິທະຍາສາດ

## はなしましょう **"ຄຳສັບສະຖານທີ່"**

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຮູ້ຄຳສັບກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນ.

1) ນັກຮຽນຝຶກຫັດເປັນຄູ່: A ເວົ້າເປັນພາສາລາວ, B ເວົ້າເປັນພາສາຍີ່ປຸ່ນ.
   ຕົວຢ່າງ: A: "ຫ້ອງຄອມພິວເຕີ, ເດີ່ນໂຮງຮຽນ"...
   B: コンピューターしつ、こうてい...
2) ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

## きいてかきましょう **"ສະຖານທີ່ ທີ່ຖືກແນະນຳ"**

- ຝຶກຟັງສຽງໃນ CD ແລ້ວເລືອກສະຖານທີ່ ຈາກຮູບ a-i

① a
② d
③ b
④ g

ຄຳຕອບໃນ CD

1. ここは にほんごの <u>きょうしつ</u>です。
   あたらしいですね。
2. ここは <u>しょくどう</u>です。
   にぎやかですね。
3. そこは <u>としょしつ</u>です。
   きれいですね。
4. あそこは <u>こうてい</u>です。

- ໃຫ້ນັກຮຽນກວດຄຳຕອບນຳໝູ່ທີ່ນັ່ງທາງຂ້າງ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

❖ ທວນຄືນການນຳໃຊ້ ここ koko (ຢູ່ນີ້), そこ soko (ຢູ່ພັ້ນ), あそこ asoko (ຢູ່ພຸ້ນ)


かいわ 19

ここは　としょしつです。
Koko wa toshoshitsu desu.

きれいですね。
Kiree desu ne.

ここは　コンピューターしつです。
Koko wa konpyuutaa-shitsu desu.

あたらしいですね。
Atarashii desu ne.

あそこは　しょくどうです。
Asoko wa shokudoo desu.

にぎやかですね。
Nigiyaka desu ne.

はなしましょう
ແນະນຳສະຖານທີ່ຕ່າງໆໃນໂຮງຮຽນໃຫ້ໝູ່.
ໝູ່ເວົ້າຄວາມຮູ້ສຶກກ່ຽວກັບສະຖານທີ່ ທີ່ຖືກແນະນຳ.
ຕົວຢ່າງ:
A：ここは　こうてい　です
Koko wa kootee desu.
B：ひろい ですね。
Hiroi desu ne.

23

## かいわ "ແນະນຳສະຖານທີ່ໃນໂຮງຮຽນ"

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ວິທີການແນະນຳ ແລະ ສະແດງຄວາມຮູ້ສຶກດ້ວຍຄຳຄຸນນາມສັ້ນໆ.

❖ **<u>ຂັ້ນຕອນການສອນ</u>**

1) ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບເລື່ອງຫຍັງ? ຢູ່ໃນສະຖານນະການແນວໃດ?
2) ນັກຮຽນສັງເກດຮູບພາບ ແລະ ຕອບຕາມຄວາມຄິດ.
3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
4) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ
5) ທົບທວນຄວາມເຂົ້າໃຈກ່ຽວກັບຄຳສັບທີ່ສະແດງຄວາມຮູ້ສຶກ ເຊັ່ນ: きれい、あたらしい、にぎやか…
6) ຟັງ CD ແລ້ວຝຶກອອກສຽງ.
7) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
8) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.



## はなしましょう "ແນະນຳສະຖານທີ່ໃນໂຮງຮຽນ"

❖ **<u>ຂັ້ນຕອນການສອນ</u>**

1) ແນະນຳສະຖານທີ່ໃນໂຮງຮຽນໃຫ້ໝູ່
2) ໝູ່ສະແດງຄວາມຮູ້ສຶກຕໍ່ກັບສະຖານທີ່ ທີ່ຖືກແນະນຳ

<u>ຕົວຢ່າງ</u>: A: ここは ～ (ສະຖານທີ່) です。

B: ～ ですね。(ສະແດງຄວາມຮູ້ສຶກ)

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ ア**

ຕົວອັກສອນຄະຕະຄະນະໃຊ້ສຳລັບຂຽນຄຳສັບທີ່ຢືມມາຈາກພາສາຕ່າງປະເທດ, ຊື່ຄົນ, ຊື່ສະຖານທີ່ຕ່າງໆ, ຊື່ປະເທດ. ຈຳນວນຕົວອັກສອນຄະຕະຄະນະ ເທົ່າກັບຕົວອັກສອນຮິລະງະນະ ແລະ ອອກສຽງຄືກັນ ແຕ່ວິທີຂຽນຕ່າງກັນ.

ການຂຽນຕົວອັກສອນຄະຕະຄະນະແມ່ນຕ່າງກັນກັບການຂຽນຕົວອັກສອນຮິລະງະນະ ເນື່ອງຈາກວ່າຕົວອັກສອນຄະຕະຄະນະ ຂຽນດ້ວຍເສັ້ນຊື່ ແລະ ເສັ້ນເປັນຫຼ່ຽມ; ມີ 3 ແບບຄື: ເສັ້ນຢຸດ （とめ）, ເສັ້ນປັດ（はらい） ແລະ ເສັ້ນງໍ（はね）.

ຕົວຢ່າງ: ເສັ້ນຢຸດ （とめ） ເສັ້ນປັດ（はらい） ເສັ້ນງໍ（はね）

ム ウ カ

1) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
2) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ ア.
3) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
4) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
5) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນຕົວອັກສອນ ແຖວ ア.
6) ໃນຄຳສັບມີຕົວອັກສອນທີ່ບໍ່ທັນໄດ້ຮຽນ; ຄຳສັບເຫຼົ່ານັ້ນ ໃຫ້ແຕ້ມຕາມເສັ້ນທີ່ກຳນົດໄວ້. ສຳລັບຕົວອັກສອນທີ່ຮຽນແລ້ວໃຫ້ຝຶກຂຽນດ້ວຍຕົນເອງ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ**

ຄຳຕອບ : 1) エ 2) イ 3) オ 4) ア 5) ウ

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຄູຍົກຮູບພາບສະຖານທີ່ຕ່າງໆໃນໂຮງຮຽນ ແລ້ວໃຫ້ນັກຮຽນເວົ້າຄຳສັບ ເຊັ່ນ: ຍົກຮູບ "ຫ້ອງຮຽນ" ໃຫ້ນັກຮຽນເວົ້າ "きょうしつ".
- ວຽກບ້ານ: ໃຫ້ນັກຮຽນທວນຄືນຄຳສັບກ່ຽວກັບສະຖານທີ່ ແລະ ຄຳສັບສະແດງຄວາມຮູ້ສຶກ.

✿❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀✿

ຄັ້ງທີ 2

## きいてかきましょう **"ຫ້ອງນ້ຳຢູ່ໃສ?**



2. ຫ້ອງນ້ຳຢູ່ໃສ?

20

21

すみません。トイレは どこですか。
Sumimasen. Toire wa doko desu ka.

トイレは あそこです。
Toire wa asoko desu.

はなしましょう

A： すみません。ばいてんは どこですか。
Sumimasen. Baiten wa doko desu ka.

B： ばいてんは あそこです。
Baiten wa asoko desu.

A： ありがとうございます。
Arigatoo gozaimasu.

24

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຖາມກ່ຽວກັບສະຖານທີ່ຕ່າງໆໃນປະໂຫຍກ.

❖ **ຂັ້ນຕອນການສອນ**

1) ທວນຄືນຄຳສັບກ່ຽວກັບສະຖານທີ່ຕ່າງໆດ້ວຍຮູບ ພ້ອມທັງໃຫ້ນັກຮຽນເວົ້າຄຳສັບເປັນພາສາຍີ່ປຸ່ນ.
2) ສົນທະນາກ່ຽວກັບຮູບວ່າແຕ່ລະຮູບຢູ່ສະຖານທີ່ໃດ?
3) ຟັງ CD ແລ້ວໝາຍເລກທີ່ຖືກຕ້ອງຕາມບົດສົນທະນາ.
4) ກວດຄຳຕອບນຳໝູ່ທີ່ນັ່ງທາງຂ້າງ.




ຄຳຕອບໃນ CD (スクリプト)

1. すみません、しょくいんしつは どこですか。
   しょくいんしつは ここです。
   ありがとうございます。
2. すみません、しょくどうは どこですか。
   しょくどうは あそこです。
   ありがとう。
3. すみません、としょしつは どこですか。
   としょしつは あそこです。
   ありがとうございます。

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ～は　ここ／そこ／あそこです。ここは　としょしつです。ແມ່ນປະໂຫຍກແນະນຳສະຖານທີ່. ສຳລັບ としょしつは　ここです。ແມ່ນການຊີ້ບອກທີ່ຕັ້ງຂອງສະຖານທີ່.

## かいわ **“ການຖາມສະຖານທີ່”**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ວິທີຖາມສະຖານທີ່ຕ່າງໆ.

❖ **<u>ຂັ້ນຕອນການສອນ</u>**

1) ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບເລື່ອງຫຍັງ? ຢູ່ໃນສະຖານນະການແນວໃດ?
2) ນັກຮຽນສັງເກດຮູບພາບ ແລະ ຕອບຕາມຄວາມຄິດ.
3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
4) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ.
5) ຟັງ CD ແລ້ວຝຶກອອກສຽງ.
6) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
7) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

## はなしましょう **“ຖາມໝູ່ກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນ”**

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຮູ້ຖາມ-ຕອບກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນ.

1) ຄູສົນທະນາເປັນຕົວຢ່າງໃຫ້ນັກຮຽນເບິ່ງ.
2) ຄູ-ນັກຮຽນທັງໝົດ: ຄູເປັນ A; ນັກຮຽນເປັນ B.
3) ນັກຮຽນຝຶກຫັດເປັນຄູ່.

ຕົວຢ່າງ:

A: すみません。～は　どこですか。
B: ～は　あそこです。
A: ありがとうございます。

4) ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.


よみましょう　22

① ここは　としょしつです。
きれいです。
わたしの　しゅみは　どくしょです。
(　　)

② ここは　しょくどうです。
ひろいです。
ときどき　カオピヤックを　たべます。
(　　)

③ ここは　にほんごの　きょうしつです。
あたらしいです。
わたしは　にほんごが　すきです。
(　　)

A　B　C

25

## よみましょう **“ແນະນຳໂຮງຮຽນ”**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນສັງເກດຮູບ ແລະ ຄຳສັບຫຼັກຂອງບົດອ່ານ ເພື່ອຊອກຫາຄຳຕອບ.

- ❖ **ຂັ້ນຕອນການສອນ**

1) ຄູອະທິບາຍກ່ຽວກັບວິທີອ່ານ ໂດຍເລີ່ມຕົ້ນຈາກການບອກຈຸດປະສົງ ແລະ ສະຖານະການຂອງບົດອ່ານນັ້ນ "ອ່ານປະໂຫຍກຕໍ່ໄປນີ້; 3 ຄົນກຳລັງແນະນຳໂຮງຮຽນ, ພວກລາວກຳລັງແນະນຳສະຖານທີ່ໃດ?".
2) ຄູໃຫ້ນັກຮຽນເບິ່ງຮູບພາບ A – C ແລ້ວຕັ້ງຄຳຖາມ.
3) ນັກຮຽນອ່ານບົດແລ້ວຂີດກ້ອງຄຳສັບຫຼັກທີ່ເປັນຄຳຕອບ ແລະ ກົງກັນກັບສະຖານທີ່ທີ່ມີຢູ່ໃນຮູບ (ໃຫ້ເວລາ 5 ນາທີ).
4) ຄຳຕອບ: ຄູຖາມນັກຮຽນກ່ຽວກັບຄຳຫຼັກ. ຫຼັງຈາກນັ້ນ, ເວົ້າຄຳຕອບຂອງບົດອ່ານ.

① 

ここは　としょしつです。
きれいです。
わたしの　しゅみは　どくしょです。

(　B　)

② 

ここは　しょくどうです。
ひろいです。
ときどき　カオピヤックを　たべます。

(　C　)

③ 

ここは　にほんごの　きょうしつです。
あたらしいです。
にほんごは　かようびです。

(　A　)



**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ບໍ່ໃຫ້ແປບົດອ່ານເປັນພາສາລາວ; ໃຫ້ນັກຮຽນຄິດ ຫຼື ຈິນຕະນາການຈາກຮູບ ແລະ ສະຖານະການນັ້ນ.
- ສ້າງທັກສະການອ່ານຈັບໃຈຄວາມ, ຮູ້ຄຳສັບຫຼັກດ້ວຍການສັງເກດຮູບພາບ ແລະ ຄຳທີ່ໄດ້ຮຽນຜ່ານມາ.

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ カ、ガ**

1) ທວນຄືນຕົວອັກສອນຄະຕະຄະນະ; ອ່ານ ແລະ ຂຽນຕົວອັກສອນແຖວ ア.
2) ຄູໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ カ、ガ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ カ、ガ

❖ **ຟັງ CD ແລ້ວຂຽນຕົວອັກສອນທີ່ໄດ້ຍິນ.**

1) コ 2) カ 3) ク 4) キ 5) ケ

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ການຖາມ: "(ສະຖານທີ່) ຢູ່ໃສ? ພາສາຍີ່ປຸ່ນວ່າແນວໃດ?".
- ການເວົ້າສະຖານທີ່ຕ່າງໆ "ຢູ່ນີ້/ ຢູ່ຫັ້ນ/ ຢູ່ພຸ້ນ" ພາສາຍີ່ປຸ່ນວ່າແນວໃດ?
- ວຽກບ້ານ: ແຕ້ມຫ້ອງ ຫຼື ສະຖານທີ່ຕ່າງໆໃນໂຮງຮຽນເພື່ອຈະນຳໃຊ້ໃນຊົ່ວໂມງກິດຈະກຳ.



ຄັ້ງທີ 3

かつどう **"ແນະນຳສະຖານທີ່ຕ່າງໆໃນໂຮງຮຽນ"**

かつどう **ກິດຈະກຳ**

ແນະນຳສະຖານທີ່ຕ່າງໆໃນໂຮງຮຽນໃຫ້ຄູຄົນຍີ່ປຸ່ນ ແລະ ແຂກທີ່ມາຢ້ຽມຢາມ.

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດແນະນຳສະຖານທີ່ຕ່າງໆ ເປັນພາສາຍີ່ປຸ່ນ.

❖ **ທວນຄືນບົດຮຽນຜ່ານມາ**

ໃຫ້ທວນຄືນຫົວບົດ ແລະ ເນື້ອໃນຂອງ ບົດຮຽນນີ້,ທວນຄືນກ່ຽວກັບຄຳສັບ ແລະ ປະໂຫຍກການຖາມ - ຕອບກ່ຽວກັບການ ແນະນຳສະຖານທີ່ຕ່າງໆ.

### ❖ ຂັ້ນຕອນການສອນ

1) ຈັດກຸ່ມນັກຮຽນເພື່ອສົນທະນາກ່ຽວກັບສະຖານທີ່ໃນໂຮງຮຽນ. ກະກຽມຮູບພາບ, ຮູບແຕ້ມເພື່ອຂຶ້ນນຳສະເໜີ.
2) ຈັດວາງເຈ້ຍໃນແຕ່ລະຈຸດ; ຫຼັງຈາກນັ້ນ, ໃຫ້ແຕ່ລະກຸ່ມແນະນຳສະຖານທີ່ຕ່າງໆ.

ຕົວຢ່າງ: ここは きょうしつです。

しょくいんしつです。

あそこは コンピューターしつです。

ໃຫ້ນັກຮຽນໃນກຸ່ມຕັ້ງຄຳຖາມ ເຊັ່ນ: A： すみません。～は どこですか。

B： ～は ここ／そこ／あそこです。

A： ありがとうございます。

---

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູກະກຽມຄຳສັບພາສາຍີ່ປຸ່ນກ່ຽວກັບສະຖານທີ່ ທີ່ບໍ່ມີໃນປຶ້ມແບບຮຽນ ເຊັ່ນ: ຫ້ອງກິດຈະກຳ, ຫ້ອງຖ່າຍເຄື່ອງ, ຫ້ອງຊາວໜຸ່ມ ແລະ ອື່ນໆ

---




### ❖ ທົບທວນຄືນບົດຮຽນ

- ທວນຄືນຄຳສັບ.

  ここ、そこ、あそこ

- ໃຫ້ນັກຮຽນ 2-3 ຄູ່ຂຶ້ນແນະນຳສະຖານທີ່.

  A: ～ は どこですか。

  B: ～ は あそこです。

## Can-Do Check

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.



❀ ສະຖານທີ່ຕ່າງໆຂອງໂຮງຮຽນມັດທະຍົມຍີ່ປຸ່ນ ❀

ໂຮງຮຽນມັດທະຍົມຍີ່ປຸ່ນມີສະຖານທີ່ຕ່າງໆດັ່ງຮູບລຸ່ມນີ້. ລອງສົນທະນາກັນເບິ່ງວ່າແຕກຕ່າງກັບໂຮງຮຽນມັດທະຍົມສຶກສາຕອນຕົ້ນຂອງລາວບໍ່?

プール puuru
ສະລອຍນ້ຳ

おんがくしつ ongaku-shitsu
ຫ້ອງດົນຕີ ★

たいいくかん taiikukan
ສະໂມສອນກິລາ

ぶどうじょう budoojoo
ບ່ອນຝຶກຊ້ອມສິລະປະປ້ອງກັນໂຕ

げたばこ getabako
ບ່ອນມ້ຽນເກີບ ★

ほけんしつ hoken-shitsu
ຫ້ອງປະຖົມພະຍາບານ ★

かていかしつ kateeka-shitsu
ຫ້ອງຝຶກເຮັດອາຫານ ★

ばいてん baiten
ຮ້ານຂາຍເຄື່ອງ ★

★ ຜູ້ໃຫ້ການຊ່ວຍມີຮູບພາບປະກອບ:
Tokyo Metropolitan Tachikawa Kokusai Secondary Education School

28

**<u>ຄໍາລໍາ</u>** **❀ ສະຖານທີ່ຕ່າງໆຂອງໂຮງຮຽນມັດທະຍົມຍີ່ປຸ່ນ ❀**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນໄດ້ຮູ້ສະພາບໃນໂຮງຮຽນມັດທະຍົມຂອງຍີ່ປຸ່ນວ່າມີສະຖານທີ່ແນວໃດ ແລະ ມີຈຸດພິເສດຫຍັງແດ່ທີ່ແຕກຕ່າງກັນທາງດ້ານວັດທະນະທໍາ.

❖ **<u>ຂັ້ນຕອນການສອນ</u>**

ກ່ອນເຂົ້າໄປເບິ່ງບົດກ່ຽວກັບສະຖານທີ່ຕ່າງໆໃນໂຮງຮຽນມັດທະຍົມຕົ້ນຍີ່ປຸ່ນ ໃຫ້ນັກຮຽນສົນທະນາກ່ຽວກັບຮູບວ່າແມ່ນສະຖານທີ່ຫຍັງແດ່?

1) ຢູ່ໂຮງຮຽນມັດທະຍົມຕົ້ນຍີ່ປຸ່ນຈະມີສະລອຍນໍ້າຢູ່ໃນໂຮງຮຽນ; ເນື່ອງຈາກວ່າ, ມີວິຊາກິລາລອຍນໍ້າ ນັກຮຽນທຸກຄົນຈະຕ້ອງໄດ້ຝຶກລອຍນໍ້າໃຫ້ເປັນແຕ່ຍັງນ້ອຍ. ນອກຈາກນັ້ນ, ຍັງມີຫ້ອງດົນຕີໄວ້ສອນນັກຮຽນຫຼິ້ນເຄື່ອງດົນຕີປະເພດຕ່າງໆໃນຊົ່ວໂມງຮຽນດົນຕີ. ສ່ວນຮູບສະໂມສອນກິລາໃນຮົ່ມຈະມີການຫຼິ້ນກິລາຕີບານ, ບານບ້ວງ, ເຕັ້ນຂ້າມກະດານໄມ້ ແລະ ອື່ນໆ. ພ້ອມກັນນັ້ນຍັງໃຊ້ເປັນສະໂມສອນລວມນັກຮຽນ ຫຼື ເຮັດກິດຈະກໍາຕ່າງໆໃນຮົ່ມໄດ້ອີກດ້ວຍ. ໃນເວລາຝົນຕົກກໍຈະໃຊ້ເປັນບ່ອນຝຶກຊ້ອມກິລາ.
2) ໃນໂຮງຮຽນຈະມີບ່ອນຝຶກສິລະປະປ້ອງກັນໂຕ ເຊັ່ນ: ກິລາຈູໂດ ຊຶ່ງປູດ້ວຍພົມຢາງພິເສດທີ່ສາມາດກັນກະແທກໄດ້, ເວລານັກຮຽນລົ້ມກໍຈະບໍ່ເຈັບໂຕຫຼາຍ ແລະ ອີກຢ່າງໜຶ່ງທີ່ເປັນປະເພນີ ໃນໂຮງຮຽນມັດທະຍົມຕົ້ນຍີ່ປຸ່ນແມ່ນມີບ່ອນມ້ຽນເກີບ; ນັກຮຽນແຕ່ລະຄົນຈະຕ້ອງມີເກີບແພສີຂາວໄວ້ໃສ່ໃນໂຮງຮຽນ ແລະ ຊຽນຊື່ຕິດໄວ້ຊຶ່ງມີບ່ອນໃສ່ເກີບເສີເພາະຂອງໃຜລາວ. ກ່ອນຈະເຂົ້າໂຮງ ຮຽນ ຫຼື ກ່ອນກັບເຮືອນຈະຕ້ອງປ່ຽນເກີບທຸກຄັ້ງ.
3) ໃນໂຮງຮຽນຍັງມີຫ້ອງປະຖົມພະຍາບານ ແລະ ມີຄູປະຈໍາເພື່ອຊ່ວຍປະຖົມພະຍາບານນັກຮຽນເວລາບໍ່ສະບາຍ ຫຼື ໄດ້ຮັບບາດເຈັບຢູ່ພາຍໃນໂຮງຮຽນ. ສໍາລັບຫ້ອງຝຶກເຮັດອາຫານແມ່ນຈະໃຊ້ໃນຊົ່ວໂມງຮຽນວິຊາເຕັກໂນໂລຊີ (ສອນເຮັດອາຫານ ຫຼື ສອນຫຍິບແສ່ວຕ່າງໆ). ນອກຈາກນັ້ນ , ກໍຍັງມີຮ້ານຂາຍຂອງກິນຊຶ່ງສ່ວນຫຼາຍແມ່ນເຂົ້າປັ້ນ, ເຂົ້າກ່ອງ, ແຊນວິດ, ເຂົ້າຈີ່ທີ່ເປັນອາຫານຫວ່າງ ສໍາລັບຂາຍໃຫ້ນັກຮຽນ; ມີຫຼາຍສະຖານທີ່ ທີ່ແຕກຕ່າງກັບໂຮງຮຽນຢູ່ລາວ. ຢາກໃຫ້ໂຮງຮຽນລາວມີຫ້ອງແບບໃດແດ່?ຍ້ອນຫຍັງ?



## だい１４か　じかん　(ເວລາ)



ຄັ້ງທີ 1




**ໜ້າປົກ**

❖ **ຄາດໝາຍ**

ໃຫ້ນັກຮຽນຮູ້ການເວົ້າ ໂມງ, ເວລາ ໃນພາສາຍີ່ປຸ່ນໄດ້.

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບຫົວບົດ ແລະ ເນື້ອໃນໂດຍການເບິ່ງຮູບໃນໜ້າປົກ.
2) ຖາມນັກຮຽນວ່າສິ່ງໃດທີ່ເວົ້າກ່ຽວກັບເວລາ, ໂມງ; ໃຊ້ເວົ້າກ່ຽວກັບຫຍັງ?
- ອອັມຕົວນັກຮຽນມີສິ່ງໃດແດ່ທີ່ເວົ້າກ່ຽວກັບເວລາ
- ໃຊ້ໂມງ, ເວລາ ເພື່ອຫຍັງ?
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do.
   1. ສາມາດຖາມ-ຕອບກ່ຽວກັບເວລາໄດ້
   2. ສາມາດຖາມ-ຕອບ ເວລາເລີ່ມຕົ້ນ ແລະ ເວລາສິ້ນສຸດໄດ້

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ນັກຮຽນຄິດທົບທວນຄືນກ່ຽວກັບສະຖານະການທີ່ຕ້ອງໄດ້ເວົ້າກ່ຽວກັບເວລາ.




1. ດຽວນີ້ຈັກໂມງ?

ききましょう "ໂມງ"

❖ **ຄາດໝາຍ**: ໃຫ້ນັກຮຽນຟັງ ແລະ ຈຳແນກສຽງຂອງການເວົ້າໂມງໃນພາສາຍີ່ປຸ່ນ.

❖ **ຂັ້ນຕອນການສອນ**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໃນບົດຮຽນ.
2) ທົບທວນຄືນການນັບເລກ 1-12.
3) ຟັງ CD ພ້ອມກັບເບິ່ງໂມງ.

4) ຟັງ CD ແລ້ວຖາມກ່ຽວກັບສຽງທີ່ໄດ້ຍິນກ່ຽວກັບ "ໂມງ".

5) ຟັງ CD ແລ້ວຝຶກເວົ້າອອກສຽງ.

6) ໃຊ້ບັດຮູບຄໍາສັບ, ນັກຮຽນເບິ່ງຮູບ ແລ້ວຝຶກອອກສຽງ

7) ຝຶກອອກສຽງຄໍາສັບສຽງພິເສດ ເຊັ່ນ:

- ４じ（よじ yo-ji）
- ７じ（しちじ shichi-ji）
- ９じ（くじ ku-ji）

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ເອົາໃຈໃສ່ການອອກສຽງ 4ໂມງ, 7ໂມງ ແລະ 9ໂມງ ເພາະຈະອອກສຽງພິເສດ

| | | |
|---|---|---|
| ４じ（よじ yo-ji） | ຈະບໍ່ອອກສຽງ | よんじ |
| ７じ（しちじ shichi-ji） | ຈະບໍ່ອອກສຽງ | ななじ |
| ９じ（くじ ku-ji） | ຈະບໍ່ອອກສຽງ | きゅうじ |

## はなしましょう　**"ໂມງ"**

❖ **ຄາດໝາຍ**: ໃຫ້ນັກຮຽນສາມາດເວົ້າໂມງເປັນພາສາຍີ່ປຸ່ນໄດ້.

1) ຝຶກຫັດ ຄູ-ນັກຮຽນ
   - ໃຫ້ນັກຮຽນຝຶກອອກສຽງນໍາຫຼັງຄູ.
   - ນັກຮຽນເວົ້າ "ໂມງ" ເປັນພາສາຍີ່ປຸ່ນຕາມລໍາດັບ 1-12.
   - ຊີ້ໃສ່ໂມງ; ບໍ່ໄປຕາມລໍາດັບ. ໃຫ້ນັກຮຽນທັງໝົດເວົ້າແຕ່ລະໂມງຕາມທີ່ຄູຊີ້ບອກ.
   - ໃຫ້ນັກຮຽນແຕ່ລະຄົນເວົ້າ ຫຼື ເວົ້າເປັນແຖວ, ເວົ້າເປັນກຸ່ມ.

2) ຝຶກຫັດ ນັກຮຽນ-ນັກຮຽນ
   - ນັກຮຽນຝຶກຫັດເປັນຄູ່: A ເວົ້າເດືອນ, B ຊີ້ໃສ່ໂມງ.

   <u>ຕົວຢ່າງ</u>:

   A: しちじ、ごじ

   B: ຊີ້ໃສ່ໂມງ "7 ໂມງ", ຊີ້ໃສ່ໂມງ "5ໂມງ".

3) ຝຶກຫັດ: ນັກຮຽນ-ນັກຮຽນ

- ນັກຮຽນຝຶກຫັດເປັນຄູ່: A ເວົ້າເປັນພາສາຍີ່ປຸ່ນ, B ເວົ້າເປັນພາສາລາວ.

<u>ຕົວຢ່າງ</u>: A: ５じ、８じ、１２じ...

B: “5 ໂມງ, 8 ໂມງ, 12 ໂມງ. ”.

4) ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູສອນ</u>**

- ໃຫ້ຄູພານັກຮຽນຝຶກອອກສຽງນຳ CD.
- ຄູກະກຽມໂມງ ສຳລັບໃຊ້ເປັນສື່ການສອນ.



ききましょう 25

ເວລາຂ້າງລຸ່ມນີ້ເວົ້າແນວໃດ?

❖ ວິທີເວົ້າໂມງ ເຄິ່ງ

○:30 ○じはん ~ji han ຕົວຢ່າງ: 3:30 3じはん san-ji han

❖ ວິທີເວົ້າ ຕອນເຊົ້າ, ຕອນແລງ

7:00AM ごぜん７じ gozen shichi-ji

4:00PM ごご４じ gogo yo-ji

ເລືອກ ຄຳຕອບທີ່ຖືກຕ້ອງ. 26

ຕົວຢ່າງ: ( 2:00 6:00 )

① ( 7:00 11:00 ) ② ( 5:00 9:00 )

③ ( 4:30 8:30 ) ④ ( 10:30 12:30 )

⑤ ( 3:00AM 3:00PM ) ⑥ ( 1:30AM 1:30PM )

30

## ききましょう “ໂມງເຄິ່ງ”

❖ **<u>ຄາດໝາຍ</u>**: ນັກຮຽນຟັງ ແລະ ເວົ້າໂມງເຄິ່ງເປັນພາສາຍີ່ປຸ່ນ.

❖ **<u>ຂັ້ນຕອນການສອນ</u>**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໂມງ ແລະ ການເວົ້າ “ເຄິ່ງ” .

2) ຟັງ CD ພ້ອມທັງເບິ່ງຮູບໂມງ.

3) ຟັງ CD ແລ້ວຖາມເຖິງສຽງທີ່ໄດ້ຍິນກ່ຽວກັບ “ໂມງເຄິ່ງ”.

4) ຟັງ CD ແລ້ວຝຶກເວົ້າອອກສຽງ.

5) ໃຊ້ບັດຮູບຄຳສັບ, ນັກຮຽນເບິ່ງຮູບ ແລ້ວຝຶກອອກສຽງ.

- ວິທີເວົ້າໂມງ ເຄິ່ງ ～じはん

<u>ຕົວຢ່າງ</u>: 7:30 しちじはん

- ວິທີເວົ້າ ຕອນເຊົ້າ, ຕອນແລງ

AM ごぜん PM ごご

<u>ຕົວຢ່າງ</u>: 7:00 AM ごぜんしちじ

4:00 PM ごごよじ

きいてかきましょう **“ຟັງແລ້ວເລືອກຄໍາຕອບ”**

**ຄໍາຕອບໃນ CD**:

いちじ はん、よじ はん、ごじ はん、じゅうじ はん、じゅういちじ はん

❖ **<u>ຂັ້ນຕອນການສອນ</u>**

1) ເບິ່ງໂມງໃນແຕ່ລະຄໍາຖາມ ແລະ ເວົ້າເປັນພາສາຍີ່ປຸ່ນ.
   ຕົວຢ່າງ: ( 2:00 6:00 ) にじ と ろくじ
2) ຟັງ CD ຄັ້ງທີ 1 ບໍ່ທັນໃຫ້ນັກຮຽນຂຽນເວລາ.
3) ຟັງ CD ຄັ້ງທີ 2 ໃຫ້ນັກຮຽນຂຽນຄໍາຕອບ.
4) ຟັງ CD ຄັ້ງທີ 3 ໃຫ້ນັກຮຽນສົມທຽບຄໍາຕອບຂອງໝູ່.
5) ຟັງ CD ຄັ້ງທີ 4 ໃຫ້ນັກຮຽນກວດຄືນຄໍາຕອບ.

<u>ຕົວຢ່າງ</u>: ( 2:00 [6:00] )

① ( [7:00] 11:00 )　② ( 5:00 [9:00] )

③ ( [4:30] 8:30 )　④ ( [10:30] 12:30 )

⑤ ( 3:00AM [3:00PM] )　⑥ ( [1:30AM] 1:30PM )

ຄໍາຕອບໃນ CD

例　いま６じです
1. いま７じです。
2. いま９じです。
3. いま４じはんです。
4. いま１０じはんです。
5. ごご３じです。
6. ごぜん１じはんです。



**<u>ຂໍ້ຄວນເອົາໃຈໃສ່ສໍາລັບຄູ</u>**

- ໃຫ້ນັກຮຽນຟັງ ແລ້ວສົມທຽບຄໍາຕອບຂອງໝູ່ ຖ້າບໍ່ຄືກັນໃຫ້ຟັງ CD ຕື່ມ.
- ການເວົ້າໃຫ້ນັກຮຽນຈື່ການເວົ້າ ごぜん、ごご.



ききましょう 27

❖ ວິທີເວົ້າ ນາທີ

00:05 00:15 00:25 00:35 00:45 00:55

～ごふん ～go-fun

00:10 00:20 00:30 00:40 00:50

～じゅっぷん ～jup-pun

はなしましょう

ຕົວຢ່າງ: 8:20 はちじ にじゅっぷん hachi-ji nijup-pun

① 12:10 ② 3:40 ③ 6:25 ④ 4:50
⑤ 2:15PM ⑥ 11:10AM ⑦ 7:35AM
⑧ 9:45PM ⑨ 5:20PM ⑩ 9:30AM

ເລືອກຄຳຕອບທີ່ຖືກຕ້ອງ. (a-e) 28

①（ ）②（ ）③（ ）④（ ）⑤（ ）

a 5:40 b 8:05 c 7:20 d 9:55 e 10:10

31

## ききましょう “ນາທີ”

❖ **<u>ຂັ້ນຕອນການສອນ</u>**

1) ໃຫ້ນັກຮຽນສົນທະນາກ່ຽວກັບການເວົ້ານາທີດ້ວຍການເບິ່ງຮູບ.
2) ເປີດ CD ໃຫ້ນັກຮຽນຟັງພ້ອມທັງຖາມສິ່ງທີ່ໄດ້ຮຽນ ແລະ ຄວາມ ແຕກຕ່າງຂອງການເວົ້າ “ນາທີ” ໃນພາສາຍີ່ປຸ່ນ.
3) ນັກຮຽນຝຶກອອກສຽງນຳຫຼັງ CD.
4) ຄູໃຊ້ບັດຄຳສັບ ໃຫ້ນັກຮຽນເບິ່ງ ພ້ອມທັງຝຶກເວົ້ານາທີ.
   ～ごふん, ～じゅっぷん
5) ຄູອະທິບາຍການອອກສຽງ ぷん ໃນເວລາທີ່ອອກສຽງ 10 ນາທີ, 20 ນາທີ ເຊັ່ນ: じ<u>ゅっ</u>ぷん jup-pun 、にじ<u>ゅっ</u>ぷん nijup-pun.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຝຶກໃຫ້ນັກຮຽນຮູ້ຈຳແນກການອອກສຽງລະຫວ່າງ～ふん ແລະ ～ぷん.

## はなしましょう ເວົ້າ “ໂມງ, ນາທີ”

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຝຶກເວົ້າໂມງ ແລະ ນາທີ

❖ **<u>ຂັ້ນຕອນການສອນ</u>**:

ຄູເວົ້າຕົວຢ່າງໃຫ້ນັກຮຽນຟັງ: 8:20 はちじ にじゅっぷん

① 12:10 じゅうにじ じゅっぷん
② 3:40 さんじ よんじゅっぷん
③ 6:25 ろくじ にじゅうごふん
④ 4:50 よじ ごじゅっぷん
⑤ 2:15PM ごご にじ じゅうごふん
⑥ 11:10AM ごぜん じゅういちじ じゅっぷん
⑦ 7:35AM ごぜん しちじ さんじゅうごふん
⑧ 9:45PM ごご くじ よんじゅうごふん
⑨ 5:20PM ごご ごじ にじゅっぷん
⑩ 9:30AM ごぜん くじはん

❖ ເລືອກຄຳຕອບທີ່ຖືກຕ້ອງ (a-e)

ຄຳຕອບໃນ CD

1．いま　なんじですか。
　８じ　５ふんです。
2．すみません、いま　なんじですか。
　えーと、１０じ　１０ぷんです。
3．いま　なんじですか。
　いま、７じ２０ぷんです。
4．すみません、いま　なんじですか。
　９じ　５５ふんです。
5．すみません、いま　なんじですか。
　えー、いま　５じ　４０ぷんです。

- ໃຫ້ນັກຮຽນເວົ້າໂມງ ແລະ ນາທີໃນ
- ເປີດ CD ໃຫ້ນັກຮຽນຟັງ ໂດຍບໍ່ເບິ່ງປຶ້ມ.
- ຟັງ CD ແລ້ວຂຽນຕົວເລກ ແລະ ຄຳຕອບ.
- ສົມທຽບຄຳຕອບຂອງໝູ່.

① ( b ) ② ( e ) ③ ( c ) ④ ( d ) ⑤ ( a )

| a | b | c | d | e |
|---|---|---|---|---|
| 5:40 | 8:05 | 7:20 | 9:55 | 10:10 |

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ** サ、ザ

1) ທວນຄືນຕົວອັກສອນແຖວ カ、ガ
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ サ、ザ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນລຳດັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນຕົວອັກສອນ ແຖວ サ、ザ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ**

1)__シ__ 2)__ソ__ 3)__セ__ 4)__サ__ 5)__ス__

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຖາມຄືນການເວົ້າ "ໂມງ ແລະ ນາທີ" ໃຫ້ນັກຮຽນເວົ້າເປັນພາສາຍີ່ປຸ່ນ. ຖາມ "ດຽວນີ້ຈັກໂມງ"?
- ການເວົ້ານາທີມີຈັກແບບ?, ອອກສຽງຕ່າງກັນແນວໃດ?



ຄັ້ງທີ 2




## かいわ ບົດສົນທະນາ

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນສາມາດຖາມ-ຕອບກ່ຽວກັບໂມງເປັນພາສາຍີ່ປຸ່ນໄດ້.

❖ **<u>ຂັ້ນຕອນການສອນ "ບົດສົນທະນາ"</u>**

1) ທວນຄືນການເວົ້າ "ໂມງ" ແລະ "ນາທີ".
- ໃຫ້ທວນຄືນບົດຮຽນຜ່ານມາໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.

2) ນາງ ນະນະ ແລະ ທ້າວ ແກ້ວ ຖາມ-ຕອບຫຍັງແດ່ກ່ຽວກັບໂມງ?

3) ສົນທະນາກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ.

4) ໃຫ້ນັກຮຽນຟັງ CD ໂດຍຈັບຄໍາສັບຫຼັກທີ່ໄດ້ຍິນ ແລະ ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ.

5) ຄູສອບຖາມກ່ຽວກັບສຽງ ຫຼື ຄໍາສັບທີ່ໄດ້ຍິນ ແລະ ຄວາມໝາຍໃນບົດສົນທະນາ.

6) ຟັງ CD ແລ້ວຝຶກເວົ້າອອກສຽງ.

7) ຄູເປັນຕົວລະຄອນໃນບົດສົນທະນາ; ຝຶກເວົ້າບົດສົນທະນາເປັນຕົວຢ່າງ. ຫຼັງຈາກນັ້ນ, ນັກຮຽນຝຶກສົນທະນາເປັນຄູ່.

## はなしましょう "ຝຶກຖາມ-ຕອບກ່ຽວກັບໂມງ"

❖ **<u>ຂັ້ນຕອນການສອນ</u>**

- ໃຫ້ນັກຮຽນເລືອກ ແລະ ຂຽນເວລາຕາມໃຈ.

<u>ຕົວຢ່າງ</u>:

| 11:40 | 07:15 |
|---|---|

- ຖາມ: いま　なんじですか。
- ຕອບ: ごぜん　じゅういちじ　よんじゅっぷんです。
- ຖາມເວລານຳໝູ່ ແລ້ວຂຽນເວລາທີ່ໄດ້ຍິນ




**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນຍ່າງເລາະຖາມໂມງນຳໝູ່ໃນຫ້ອງດ້ວຍພາສາຍີ່ປຸ່ນ.



かいわ　30

ビエンチャンは　いま　ごぜん11じです。
Bienchan wa ima gozen juuichi-ji desu.
とうきょう　は　いま　なんじですか。
Tookyoo wa ima nan-ji desu ka.
ごご　1じ　です。
Gogo ichi-ji desu.

はなしましょう



| | | | | | |
|---|---|---|---|---|---|
| ① | ビエンチャン | bienchan | ② | とうきょう | tookyoo |
| ③ | シドニー | shidonii | ④ | ロンドン | rondon |
| ⑤ | ニューヨーク | nyuuyooku | ⑥ | デリー | derii |

33

かいわ **"ຖາມໂມງຢູ່ແຕ່ລະປະເທດ"**

❖ **<u>ຄາດໝາຍ</u>** :

ໃຫ້ນັກຮຽນຮູ້ ຖາມ-ຕອບໂມງຢູ່ແຕ່ລະປະເທດໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ສົນທະນາກ່ຽວກັບຮູບ ແລະ ເນື້ອໃນບົດສົນທະນາ.
2) ຟັງ CD ແລ້ວຖາມກ່ຽວກັບຄຳສັບທີ່ໄດ້ຍິນ.
3) ຖາມນັກຮຽນກ່ຽວກັບສະຖານະການໃນບົດສົນທະນາ.
4) ຟັງ CD ແລ້ວຝຶກເວົ້າອອກສຽງ.
5) ຝຶກຫັດ ຖາມ-ຕອບ ເວລາຂອງປະເທດຕ່າງໆ.
   - ນັກຮຽນເບິ່ງແຜນທີ່ແລ້ວຕອບກ່ຽວກັບເວລາໃນແຕ່ລະເມືອງ; ມີເມືອງຫຍັງແດ່? ແຕ່ລະເມືອງແມ່ນເມືອງຫຼວງຂອງປະເທດໃດ? ເວລາຂອງແຕ່ລະປະເທດຕ່າງກັນຈັກຊົ່ວໂມງ? ເຊັ່ນ: ຢູ່ນະ ຄອນຫຼວງວຽງຈັນ 9 ໂມງເຊົ້າ, ຢູ່ໂຕກຽວ (ປະເທດຍີ່ປຸ່ນ) ແມ່ນ 11 ໂມງ; ຖ້າຢູ່ວຽງຈັນ 7 ໂມງເຊົ້າ; ຢູ່ໂຕກຽວແມ່ນຈັກໂມງ? ຫ່າງກັນຈັກຊົ່ວໂມງ?

ຕົວຢ່າງ: ビエンチャンは　いま　ごぜん 11じです。

とうきょう は　いま　なんじですか。

ごご　1じ　です。

| | | | |
|---|---|---|---|
| ① | ビエンチャン | bienchan | ごぜん　じゅういちじです。 |
| ② | とうきょう | tookyoo | ごご　いちじです。 |
| ③ | シドニー | shidonii | ごご　じゅうにじです。 |
| ④ | ロンドン | rondon | ごぜん　よじです。 |
| ⑤ | ニューヨーク | nyuuyooku | ごご　じゅうじです。 |
| ⑥ | デリー | derii | ごぜん　くじはんです。 |

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ໃຫ້ນັກຮຽນຮູ້ທີ່ຕັ້ງຂອງເມືອງຕ່າງໆໃນແຜນທີ່ ພ້ອມກັບສົມທຽບໂມງແຕ່ລະເມືອງ.

## 2. ເຂົ້າຮຽນແຕ່ຈັກໂມງຫາຈັກໂມງ?

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຖາມ-ຕອບ ໄລຍະຂອງເວລາວ່າແຕ່ຈັກໂມງຫາຈັກໂມງ.

❖ **ຂັ້ນຕອນການສອນ**

1) ນັກຮຽນຟັງສຽງຈາກ CD. ນັກຮຽນຈະໄດ້ຟັງເວລາເລີ່ມ ຕົ້ນ ແລະ ເວລາສິ້ນສຸດ; ແຕ່ຈັກໂມງຫາຈັກໂມງ? ຟັງ ສຽງໃນ CD ແລ້ວຂຽນເວລາທີ່ໄດ້ຍິນ.
2) ຟັງ CD ເທື່ອທີ 1 ແມ່ນໃຫ້ຟັງຜ່ານໆ, ເຂົ້າໃຈເນື້ອໃນໂດຍລວມຂອງບົດສົນທະນາ; ຟັງເທື່ອທີ 2 ແມ່ນຟັງເອົາຄໍາສັບຫຼັກ ແລະ ເທື່ອທີ 3 ແມ່ນຟັງເອົາຕົວເລກຂອງເວລາເລີ່ມຕົ້ນ ແລະ ສິ້ນສຸດ ແຕ່ລະຂັ້ນຕອນ.

**ຄຳຕອບ**:

① (8:00～8:30) ② (11:30～1:00PM) ③ (5:00～6:30)

## かいわ "ແຕ່ຈັກໂມງຫາຈັກໂມງ"

- ❖ **ຄາດໝາຍ**:

  ໃຫ້ນັກຮຽນສາມາດເຂົ້າໃຈໄລຍະເວລາຢູ່ລາວ ແລະ ຢູ່ຍີ່ປຸ່ນ.

- ❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບຮູບພາບ ທີ່ມີເນື້ອໃນຕິດພັນກັບການເວົ້າໂມງ.
2) ອັດປຶ້ມ; ຟັງ CD ແລ້ວເວົ້າກ່ຽວກັບຄຳສັບທີ່ໄດ້ຍິນ.
3) ຟັງ CD ພ້ອມທັງຖາມກ່ຽວກັບສະຖານະການ ແລະ ເນື້ອໃນຂອງບົດສົນທະນາ.
4) ຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈ ຫຼື ບໍ່? ເຊັ່ນ: ໂຮງຮຽນມັດທະຍົມຕອນຕົ້ນຢູ່ລາວເຂົ້າຮຽນຈັກໂມງ? ຢູ່ຍີ່ປຸ່ນເຂົ້າຈັກໂມງ? ເລີກຮຽນແມ່ນຈັກໂມງ; ຄືກັນກັບຢູ່ລາວບໍ່?
5) ຟັງ CD ແລ້ວຝຶກອອກສຽງຕາມບົດສົນທະນາ.
6) ຟັງ CD ແລະ ເບິ່ງປຶ້ມໄປນຳ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈເນື້ອໃນບົດສົນທະນາບໍ່? ຖ້ານັກຮຽນສາມາດຕອບຖືກແມ່ນນັກຮຽນເຂົ້າໃຈເນື້ອໃນບົດສົນທະນາດັ່ງກ່າວ.



## はなしましょう "ຝຶກຖາມ-ຕອບ ແຕ່ຈັກໂມງຫາຈັກໂມງ"

- ❖ **ຂັ້ນຕອນການສອນ**

  - ຄູເຮັດບົດສົນທະນາເປັນຕົວຢ່າງໃຫ້ນັກຮຽນ.
  - ສຳລັບຄຳຕອບແມ່ນໃຫ້ບອກເວລາການເຄື່ອນໄຫວຕົວຈິງຂອງໂຮງຮຽນນັ້ນໆ.

    ຕົວຢ່າງ: A：ちょうれいは　なんじから　なんじまでですか。

    B：ごぜん　７じはんから　７じはんまでです。

  - ໃຫ້ນັກຮຽນຝຶກເປັນຄູ່ ແລ້ວແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ タ、ダ**

1) ຄູ ໃຊ້ບັດຕົວອັກສອນ ແລະ ທວນຄືນຕົວອັກສອນແຖວ サ、ザ
2) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ タ、ダ.
3) ຄູ ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
4) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
5) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນຕົວອັກສອນ ແຖວ タ、ダ
6) ໃນບາງຄຳສັບມີຕົວອັກສອນບໍ່ທັນໄດ້ຮຽນ; ຄຳສັບເຫຼົ່ານັ້ນໃຫ້ແຕ້ມຕາມເສັ້ນທີ່ກຳນົດໄວ້. ສຳລັບຕົວອັກສອນທີ່ຮຽນແລ້ວໃຫ້ຝຶກຂຽນດ້ວຍຕົນເອງ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ**

1)__テ__2)__チ__3)__タ__4)__ツ__5)__ト__

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຖາມເວລາ ແຕ່ຈັກໂມງຫາຈັກໂມງ? ພາສາຍີ່ປຸ່ນເວົ້າແນວໃດ?
- ທວນຄືນຄຳສັບກ່ຽວກັບການເວົ້າ "ເວລາເລີ່ມຕົ້ນ", "ເວລາສິ້ນສຸດ" ໂດຍໃຊ້ຄຳສັບທີ່ຮຽນມາ.
- ວຽກບ້ານ: ໃຫ້ນັກຮຽນກະກຽມຂໍ້ມູນກ່ຽວກັບເວລາຂອງເມືອງຫຼວງຕ່າງໆ ປະມານ 3 ເມືອງ. ແຕ່ລະເມືອງໃນບາງປະເທດຈະມີເວລາຕ່າງກັນ. ໃຫ້ນັກຮຽນສົມທຽບເວລາຂອງເມືອງຕ່າງໆ ກັບນະຄອນຫຼວງວຽງຈັນວ່າຫ່າງກັນຈັກຊົ່ວໂມງ.



ຄັ້ງທີ 3

かつどう **"ຖາມ-ຕອບກ່ຽວກັບເວລາ"**

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຖາມ-ຕອບກ່ຽວກັບໂມງໄດ້.

❖ **ທວນຄືນບົດຮຽນຜ່ານມາ**

- ໃຫ້ທວນຄືນບົດຮຽນຜ່ານມາໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
- ຖາມ "ດຽວນີ້ຈັກໂມງ? ຢູ່ປະເທດອື່ນເດເປັນແນວ ໃດ?

❖ **ຂັ້ນຕອນການສອນ**

1) ຈັດກຸ່ມນັກຮຽນ ກຸ່ມໜຶ່ງປະມານ 5-6 ຄົນ.
2) ຄູກະກຽມແຜນທີ່ ເພື່ອໃຫ້ນັກຮຽນຮູ້ຈຸດທີ່ຕັ້ງຂອງເມືອງຕ່າງໆ.
3) ຄູຢາຍເຈ້ຍແຜນທີ່ໃຫ້ນັກຮຽນແຕ່ລະກຸ່ມ.
4) ນັກຮຽນແຕ້ມເມືອງທີ່ຕົນເອງມັກ.
5) ຝຶກເວົ້າໃຫ້ໝູ່ຟັງພາຍໃນກຸ່ມ.
6) ນຳສະເໜີໃຫ້ໝູ່ໃນຫ້ອງຟັງ.

<u>ຕົວຢ່າງ</u>: ビエンチャンは　いま　ごぜん　７じです。

おおさかは　ごぜん　９じです。

ペキンは　ごぜん　８じです。

<u>**ຂໍ້ຄວນເອົາໃຈໃສ່ສຳລັບຄູ**</u>

- ໃຫ້ຂໍ້ມູນກ່ຽວທີ່ຕັ້ງ ແລະ ແຜນທີ່ ເພື່ອໃຫ້ນັກຮຽນໄດ້ເຮັດກິດຈະກຳງ່າຍຂຶ້ນ.
- ຄູຊອກຫາແຜນທີ່ທີ່ສາມາດຢາຍໃຫ້ນັກຮຽນ ຊຶ່ງອາດຈະດາວໂຫຼດຈາກເວັບໄຊທີ່ບໍ່ມີລິຂະສິດ ຫຼື ແຕ້ມເອົາກໍໄດ້.

❖ <u>**ທົບທວນຄືນບົດຮຽນ**</u>

1) ການຖາມ ຈັກໂມງ?
   なんじですか。
2) ການເວົ້າ "ນາທີ" ແມ່ນຈະອອກສຽງふん、ぷん ຕາມຕົວເລກນາທີ ທີ່ຢູ່ທາງໜ້າ.
3) ຖາມ ແຕ່ຈັກໂມງຫາຈັກໂມງເວົ້າແນວໃດ?
   がっこうは　なんじから　なんじまでですか。
   ～じから　～じまでです。

❖ <u>**Can-Do Check**</u>

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.

**ຄໍລຳ** ❀ **ຄວາມຮູ້ສຶກຂອງຄົນຍີ່ປຸ່ນກ່ຽວກັບເວລາ**❀

❖ **ຄາດໝາຍ**

ໃຫ້ນັກຮຽນໄດ້ຮຽນຮູ້ຄວາມແຕກຕ່າງທາງດ້ານຄວາມຮູ້ສຶກກ່ຽວກັບເວລາຂອງຄົນຍີ່ປຸ່ນແລະຄົນລາວ.

❖ **ຂັ້ນຕອນການສອນ**

1) ຄູສົນທະນາກ່ຽວກັບຕາຕະລາງ ແລະ ຮູບພາບວ່າແມ່ນຮູບຫຍັງ? "ສັງເກດເຫັນຫຍັງແດ່? ຕົວເລກໃນແຖວຕັ້ງໝາຍເຖິງຫຍັງ? ແຖວນອນໝາຍເຖິງຫຍັງ?".
2) ໃຫ້ນັກຮຽນສັງເກດ ແລ້ວຕອບຕາມຄວາມເຂົ້າໃຈກ່ອນ ຫຼັງຈາກນັ້ນ ຈຶ່ງອະທິບາຍເພີ່ມຕື່ມກ່ຽວກັບຕາຕະລາງ ຊຶ່ງຕາຕະລາງນີ້ແມ່ນຕາຕະລາງລົດໄຟແຕ່ລະຖ້ຽວ. ຖ້ຽວທຳອິດຈະເລີ່ມແຕ່ 5 ໂມງ 5ນາທີ, 25 ນາທີ, 35 ນາທີ.....ສຳລັບ7-9ໂມງເຊົ້າ ແມ່ນເວລາໄປການ ຈຶ່ງມີຖ້ຽວລົດຫຼາຍຂຶ້ນ ຄືກັນກັບເວລາເລີກການ 5-8 ໂມງແລງ ຖ້ຽວລົດໄຟກໍຈະເພີ່ມຂຶ້ນເຊັ່ນກັນ ເພື່ອອຳນວຍຄວາມສະດວກໃຫ້ປະຊາຊົນໄດ້ໄປເຮັດວຽກທັນເວລາ. ຄົນຍີ່ປຸ່ນ ຖືເວລາເປັນສິ່ງສຳຄັນ ແລະ ວາງແຜນການເດີນທາງລ່ວງໜ້າດ້ວຍການເບິ່ງຕາຕະລາງລົດ ເພື່ອໃຫ້ຕໍ່ລົດສາຍອື່ນໄດ້ທັນຕາມແຜນທີ່ວາງໄວ້. ຖ້າຫາກ ມີອຸປະຕິເຫດລົດໄຟຕິດຂັດ ກໍຈະມີການແຈ້ງເຕືອນໃຫ້ຜູ້ໂດຍສານຮູ້ ແລະ ຈະອອກໃບແຈ້ງໃຫ້ແຕ່ ລະຄົນໄດ້ໄປຍື່ນຫ້ອງການ ເພື່ອໃຫ້ຮູ້ວ່າມາການຊ້າຍ້ອນລົດໄຟຕິດຂັດ.
   - ເບິ່ງ 2 ຮູບແລ້ວຖາມກ່ຽວກັບຄວາມຄິດຂອງນັກຮຽນ. "ເວລາທີ່ເຈົ້າເກືອບໄປໂຮງຮຽນຊ້າ ເຈົ້າເຮັດແນວໃດ? ມີຄວາມຮູ້ສຶກແນວໃດ? ເວລາທີ່ນັດກັບໝູ່ໄວ້ແລ້ວເກືອບໄປຊ້າ, ເຈົ້າເຮັດແນວໃດ?"
   - ຄົນຍີ່ປຸ່ນເປັນຄົນທີ່ເຫັນເວລາເປັນສຳຄັນ, ຄົນສ່ວນຫຼາຍຈະມາກ່ອນເວລານັດໝາຍ 5 ນາທີ. ຖ້າມີຫຍັງຂັດຂ້ອງເຮັດໃຫ້ມາຊ້າກໍຈະຕ້ອງໄດ້ໂທຄອບ ຫຼື ສົ່ງຂໍ້ຄວາມຫາຜູ້ທີ່ນັດໄວ້ນັ້ນ ບອກວ່າຈະມາຊ້າຈັກນາທີ ເພື່ອບໍ່ໃຫ້ອີກຝ່າຍລໍຖ້າດົນພ້ອມກັບກ່າວຂໍໂທດທຸກຄັ້ງທີ່ມາຊ້າ ແລະ ເຮັດໃຫ້ຜູ້ອື່ນລໍຖ້າ.



だい１５か　じかんわり　(ຕາຕະລາງຮຽນ)



ຄັ້ງທີ 1


だい 15 か

ບົດທີ 15

じかんわり

Jikanwari

ຕາຕະລາງຮຽນ

Can-Do

ເປົ້າໝາຍການຮຽນ:

1) ສາມາດຖາມ-ຕອບກ່ຽວກັບມື້ຮຽນໄດ້

2) ສາມາດຖາມ-ຕອບ ເວລາເລີ່ມຕົ້ນ ແລະ ເວລາສິ້ນສຸດຂອງຊົ່ວໂມງຮຽນໄດ້

39

**<u>ໜ້າປົກ</u>**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ການເວົ້າຕາຕະລາງຮຽນເປັນພາສາຍີ່ປຸ່ນ.

❖ **<u>ຂັ້ນຕອນການສອນ</u>**

1) ສົນທະນາກ່ຽວກັບຫົວບົດ ແລະ ເນື້ອໃນຈາກການເບິ່ງຮູບໃນໜ້າປົກ.
2) ສົນທະນາກ່ຽວກັບຕາຕະລາງຮຽນ ເຊັ່ນ: ພາສາຍີ່ປຸ່ນຮຽນວັນຫຍັງ? ແຕ່ຈັກໂມງຫາຈັກໂມງ?
3) ສົນທະນາກ່ຽວກັບຕາຕະລາງຮຽນວິຊາອື່ນໆ ແລະ ມື້ຮຽນ.
4) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do.
    1. ສາມາດຖາມ-ຕອບກ່ຽວກັບມື້ຮຽນໄດ້
    2. ສາມາດຖາມ-ຕອບ ເວລາເລີ່ມຕົ້ນ ແລະ ເວລາສິ້ນສຸດຂອງຊົ່ວໂມງຮຽນໄດ້

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນຄິດທົບທວນຄືນກ່ຽວກັບຕາຕະລາງຮຽນໃນແຕ່ລະມື້. ຄູອາດກະກຽມຕາຕະລາງຮຽນຕົວຈິງເພື່ອໃຫ້ນັກຮຽນໄດ້ສົນທະນາຕົວຈິງ.


1. ຮຽນພາສາຍີ່ປຸ່ນວັນຫຍັງແດ່?

ききましょう 34

❖かもく ວິຊາ

| | | |
|---|---|---|
| a にほんご nihon-go | b ラオスご raosu-go | c えいご eego |
| d すうがく suugaku | e りか rika | f しゃかい shakai |
| g たいいく taiiku | h おんがく ongaku | i かていか kateeka |

はなしましょう

ຖາມໝູ່: ມັກ ຫຼື ບໍ່ມັກວິຊາໃດ? (a-i)

ຕົວຢ່າງ: A: にほんご が すきですか。
Nihon-go ga suki desu ka.
B: はい、すきです。
Hai, suki desu.
A: すうがく も すきですか。
Suugaku mo suki desu ka.
B: いいえ、すきじゃないです。
Iie, suki ja naidesu.

40

**1. ຮຽນພາສາຍີ່ປຸ່ນວັນຫຍັງແດ່?**

ききましょう "ວິຊາ"

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຟັງ ແລະ ຮູ້ຄຳສັບກ່ຽວກັບລາຍວິຊາໃນພາສາຍີ່ປຸ່ນ.

❖ **<u>ຂັ້ນຕອນການສອນ</u> "ລາຍວິຊາ"**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໃນບົດຮຽນ.
2) ທົບທວນຄືນກ່ຽວກັບລາຍວິຊາທີ່ຮຽນປັດຈຸບັນ.

3) ຟັງ CD ພ້ອມທັງເບິ່ງຮູບ.

4) ຟັງ CD ແລ້ວຖາມກ່ຽວກັບ "ລາຍວິຊາ" ທີ່ໄດ້ຍິນ.

5) ຟັງ CD ແລ້ວຝຶກເວົ້າອອກສຽງ.

6) ໃຊ້ບັດຮູບຄຳສັບ; ນັກຮຽນເບິ່ງຮູບ ແລ້ວຝຶກອອກສຽງ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູສອນ**

- ຄູອະທິບາຍເຖິງລາຍວິຊາທີ່ບໍ່ມີຢູ່ລາວ ແຕ່ໃຫ້ຍົກວິຊາທີ່ໃກ້ຄຽງກັບວິຊາດັ່ງກ່າວ ເຊັ່ນ: かていか ວິຊາເຕັກໂນໂລຊີ.

## はなしましょう "ມັກວິຊາໃດ?"

❖ **ຄາດໝາຍ**: ໃຫ້ນັກຮຽນຈື່ຊື່ລາຍວິຊາດ້ວຍການຖາມ-ຕອບໃນປະໂຫຍກ.

1) ຝຶກຫັດ ຄູ-ຄູ
   - ຄູເຮັດເປັນຕົວຢ່າງ; ໃຫ້ນັກຮຽນເບິ່ງ A ແລະ B
   - ນັກຮຽນເບິ່ງບົດຝຶກຫັດຕົວຢ່າງ

2) ໃຫ້ນັກຮຽນຝຶກສົນທະນາເປັນຄູ່. ນັກຮຽນສາມາດຕອບຕາມໃຈ.

ຕົວຢ່າງ: A : にほんごが　すきですか。
B : はい、すきです。
A : すうがくも　すきですか。
B : いいえ、すきじゃないです。

- ນັກຮຽນຝຶກເວົ້າເປັນຄູ່; ເລືອກຕອບ ໂດຍໃຊ້ປະໂຫຍກບອກເລົ່າ ຫຼື ປະຕິເສດ. ຫຼັງຈາກນັ້ນ, ໃຫ້ປ່ຽນຜຽນກັນຖາມ-ຕອບ.
- ໃຫ້ນັກຮຽນປະມານ 2-3 ຄູ່ ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ຄູກະກຽມຊື່ລາຍວິຊາອື່ນທີ່ບໍ່ມີໃນບົດຮຽນ ເນື່ອງຈາກບາງທີນັກຮຽນມັກວິຊານັ້ນ ແຕ່ຢາກເວົ້າເປັນພາສາຍີ່ປຸ່ນ ເຊັ່ນ: ວິຊາປະຫັວດສາດ れきし ພູມສາດちり ແລະ ອື່ນໆ

## ききましょう “ວັນ”

❖ **ຄາດໝາຍ**: ນັກຮຽນຟັງ ແລະ ເວົ້າວັນເປັນພາສາຍີ່ປຸ່ນໄດ້.

❖ **ຂັ້ນຕອນການສອນ “ວັນ”**

1) ຄູພານັກຮຽນສົນທະນາກ່ຽວກັບຕາຕະລາງ 1 ອາທິດ ຫຼື ອາດ ຈະໃຊ້ປະຕິທິນ.
2) ຟັງ CD ໂດຍບໍ່ທັນໃຫ້ເປີດປຶ້ມ.
3) ຟັງ CD ແລ້ວຖາມກ່ຽວກັບ “ວັນ” ທີ່ໄດ້ຍິນ.
4) ຟັງ CD ແລ້ວຝຶກເວົ້າອອກສຽງ.
5) ໃຊ້ບັດຮູບຄຳສັບ, ນັກຮຽນເບິ່ງຮູບ ແລ້ວຝຶກອອກສຽງ.
6) ຖາມກ່ຽວກັບການອອກສຽງ “ວັນ”.

| | | |
|---|---|---|
| ～ようび | ～yoobi | ວັນ... |
| にちようび | nichi-yoobi | ວັນອາທິດ |
| げつようび | getsu-yoobi | ວັນຈັນ |
| かようび | ka-yoobi | ວັນອັງຄານ |
| すいようび | sui-yoobi | ວັນພຸດ |
| もくようび | moku-yoobi | ວັນພະຫັດ |
| きんようび | kin-yoobi | ວັນສຸກ |
| どようび | do-yoobi | ວັນເສົາ |
| なんようび | nan-yoobi | ວັນຫຍັງ? |

ການເວົ້າວັນໃນພາສາຍີ່ປຸ່ນແມ່ນຈະລົງທ້າຍ ດ້ວຍຄຳວ່າ “ようび”

ຕົວຢ່າງ: にちようび nichi-yoobi (ວັນອາທິດ).

## きいてかきましょう “ຮຽນວັນຫຍັງ?”

❖ **ຂັ້ນຕອນການສອນ**

1) ທວນຄືນຄວາມໝາຍຂອງແຕ່ລະວິຊາ①～⑤.
2) ຄູເປີດ CD ໃຫ້ນັກຮຽນຟັງ.
3) ຄູເຮັດຕົວຢ່າງໃຫ້ເບິ່ງ 1 ຂໍ້.
4) ເປີດ CD ໃຫ້ນັກຮຽນໝາຍຄຳຕອບ.

① たいいく taiiku （ E ）
② しゃかい shakai （ B ）
③ りか rika （ A ）
④ すうがく suugaku （ C, E ）
⑤ えいご eego （ B, D ）

| | |
|---|---|
| A. げつようび getsu-yoobi | B. かようび ka-yoobi |
| C. すいようび sui-yoobi | D. もくようび moku-yoobi |
| E. きんようび kin-yoobi | F. どようび do-yoobi |
| G. にちようび nichi-yoobi | |

ຄຳຕອບໃນ CD

1. たいいくは きんようびです。
2. しゃかいは かようびです。
3. りかは げつようびです。
4. すうがくは すいようび と きんようびです。
5. えいごは かようび と もくようびです。

## きいてかきましょう "ວິຊາຫຍັງ? a-i , ຮຽນວັນຫຍັງ? A-G"

❖ **ຂັ້ນຕອນການສອນ**

1) ທວນຄືນຄວາມໝາຍຂອງແຕ່ລະວິຊາ①～⑤.
2) ຄູເປີດ CD ໃຫ້ນັກຮຽນຟັງ.
3) ຄູເຮັດຕົວຢ່າງໃຫ້ເບິ່ງ 1 ຂໍ້.
4) ເປີດ CD ໃຫ້ນັກຮຽນໝາຍຄຳຕອບ.
5) ໃຫ້ນັກຮຽນສົມທຽບຄຳຕອບນຳໝູ່ທີ່ນັ່ງທາງຂ້າງ.



**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ເວລາຟັງ CD ຄູໃຫ້ນັກຮຽນຟັງເອົາສະເພາະຄຳສັບຫຼັກ; ຫຼັງຈາກນັ້ນ, ໃຫ້ນັກຮຽນສົນທະນາແລກປ່ຽນຄຳຕອບນຳກັນກ່ອນ ແລ້ວຄູຈຶ່ງບອກຄຳຕອບສຸດທ້າຍ.
- ນັກຮຽນສາມາດຂຽນພຽງແຕ່ຕົວອັກສອນ A-G ບໍ່ຈຳເປັນຕ້ອງຂຽນເປັນຄຳສັບກໍໄດ້.

| | かもく kamoku | ようび yoobi |
|---|---|---|
| 1 | g. たいいく taiiku | B. すいようび sui-yoobi |
| 2 | h. おんがく ongaku | E. きんようび kin-yoobi |
| 3 | d. すうがく suugaku | A. げつようび getsu-yoobi<br>B. かようび ka-yoobi<br>E. きんようび kin-yoobi |
| 4 | f. しゃかい shakai | A. げつようび getsu-yoobi<br>D. もくようび moku-yoobi |

ຄຳຕອບໃນ CD

1．ケオさん、どんな　かもくが　すきですか。
たいいくが　すきです。
たいいくは　なんようびですか。
すいようびです。
あ、きょうですね。
はい。
2．ノイさん、どんな　かもくが　すきですか。
おんがくが　すきです。
おんがくは　なんようびですか。
きんようびです。
3．ミンさん、どんな　かもくが　すきですか。
すうがくが　すきです。
すうがくは　なんようびですか。
げつようびと かようびと
きんようびです。
おおいですね。
4．ナパーさん、どんな　かもくが　すきですか。
しゃかいが　すきです。
しゃかいは　なんようびですか。
げつようび　と　もくようびです。
そうですか。

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ ナ**

1) ທວນຄືນຕົວອັກສອນຄະຕະຄະນະ, ອ່ານຕົວອັກສອນແຖວ サ、ザ、タ、ダ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນ ແຖວ ナ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ ナ.

❖ **ຟັງ CD ແລ້ວຂຽນຕົວອັກສອນທີ່ໄດ້ຍິນ.**

1)__ヌ__2)__ナ__3)__ノ__4)__ネ__5)__ニ__

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຖາມວ່າ “ເຈົ້າມັກວິຊາໃດ? ພາສາຍີ່ປຸ່ນວ່າແນວໃດ? ”.
- ເວລາຖາມວ່າ “ ພາສາຍີ່ປຸ່ນຮຽນມື້ໃດ?” ເວົ້າແນວໃດ?

✿❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀✿

ຄັ້ງທີ 2

## かいわ "ວິຊາໃດ? ຮຽນວັນຫຍັງ?"

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຖາມ-ຕອບວ່າວິຊາໃດ? ຮຽນວັນຫຍັງ?

❖ **ຂັ້ນຕອນການສອນ**

1) ທວນຄືນການເວົ້າ "ຊື່ລາຍວິຊາ" ແລະ "ວັນ".
   - ທວນຄືນບົດຮຽນຜ່ານມາ ໂດຍການຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
   - ທວນຄືນຄໍາສັບລາຍວິຊາ ແລະ ເວົ້າວັນຈັນຫາວັນອາທິດ.
2) ສົນທະນາກ່ຽວກັບຮູບ ແລະ ສະຖານະການຂອງບົດສົນທະນາ.
3) ໃຫ້ນັກຮຽນຟັງ ຄໍາສັບທີ່ໄດ້ຍິນໃນ CD ແລະ ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ.
4) ຄູຖາມກ່ຽວກັບສຽງ ຫຼື ຄໍາສັບທີ່ໄດ້ຍິນ ແລະ ຄວາມໝາຍໃນບົດສົນທະນາ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ຄູເປັນຕົວລະຄອນໃນບົດສົນທະນາຕົວຢ່າງ. ຫຼັງຈາກນັ້ນ, ໃຫ້ນັກຮຽນ ຝຶກສົນທະນາເປັນຄູ່.



**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ໃຫ້ນັກຮຽນຂຽນວິຊາທີ່ຕົນມັກ ແລ້ວບອກມື້ທີ່ຮຽນວິຊານັ້ນ. ຖ້າມີຫຼາຍມື້ຮຽນກໍໃຫ້ໃຊ້ ～と～ ເຊັ່ນ: すいようび　と　もくようび　です。

## はなしましょう "ຝຶກຖາມ-ຕອບກ່ຽວກັບວິຊາທີ່ຕົນມັກ"

❖ <u>**ຂັ້ນຕອນການສອນ**</u>

1) ໃຫ້ນັກຮຽນຂຽນກ່ຽວກັບຕົນເອງກ່ອນວ່າ ມັກວິຊາໃດ? ຮຽນວັນຫຍັງ?
2) ນັກຮຽນຖາມໝູ່ 3 ຄົນໃນຫ້ອງ.
3) ໃຫ້ນັກຮຽນ 2-3 ຄູ່ຂຶ້ນນຳສະເໜີໃຫ້ໝູ່ຟັງ.

<u>ຕົວຢ່າງ:</u>

A: 〜さん、なにが　すきですか。

B: おんがくです。

A: おんがくは　なんようびですか。

B: かようびです。

| | かもく kamoku | ようび yoobi |
|---|---|---|
| わたし watashi | しゃかい | げつようび と かようび |
| B さん san | おんがく | かようび |

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ເວລານັກຮຽນຍ່າງເລາະຖາມໝູ່ໃນຫ້ອງ; ຫຼັງຈາກນັ້ນ, ໃຫ້ຂຶ້ນນຳສະເໜີ.

## かいわ "ຮຽນຈັກໂມງຫາຈັກໂມງ?"

❖ <u>**ຄາດໝາຍ**</u>: ໃຫ້ນັກຮຽນຮູ້ ຖາມ-ຕອບກ່ຽວກັບວິຊາຮຽນວ່າ ຮຽນວັນຫຍັງ? ຮຽນແຕ່ຈັກໂມງຫາຈັກໂມງ?

❖ <u>**ຂັ້ນຕອນການສອນ**</u>

1) ສົນທະນາກ່ຽວກັບຮູບ ແລະ ເນື້ອໃນບົດສົນທະນາ.
2) ຟັງ CD ແລ້ວຖາມກ່ຽວກັບຄຳສັບທີ່ໄດ້ຍິນ.
3) ຖາມນັກຮຽນກ່ຽວກັບສະຖານະການໃນບົດສົນທະນາ. ນາງ ນະນະ ຖາມ ທ້າວ ແກ້ວກ່ຽວກັບຫຍັງ? ພາສາຍີ່ປຸ່ນຮຽນວັນຫຍັງ? ແຕ່ຈັກໂມງຫາຈັກໂມງ?

4) ຝຶກຫັດຖາມ-ຕອບເປັນຄູ່ ໂດຍໃຫ້ຄູເຮັດບົດສົນທະນາຕົວຢ່າງໃຫ້ເບິ່ງກ່ອນ ຫຼັງຈາກນັ້ນ, ໃຫ້ນັກຮຽນຝຶກເປັນຄູ່.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນສາມາດເວົ້າວິຊາພາສາຍີ່ປຸ່ນຢູ່ໂຮງຮຽນຂອງຕົນເອງວ່າ ຮຽນວັນຫຍັງ? ແຕ່ຈັກໂມງຫາຈັກໂມງ?

## はなしましょう

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນສາມາດຖາມ-ຕອບກ່ຽວກັບລາຍວິຊາໃນຕາຕະລາງ.

❖ **<u>ຂັ້ນຕອນການສອນ</u>**

1) ໃຫ້ຝຶກເວົ້າເປັນຄູ່ A ແລະ B. ຜູ້ເປັນ A ຖາມຂໍ້ມູນນຳຜູ້ເປັນ B ແລ້ວຕື່ມໃສ່ຕາຕະລາງຂອງຕົນ. ຫຼັງຈາກນັ້ນ, ປ່ຽນໜຽນໃຫ້ຜູ້ເປັນ B ຖາມຂໍ້ມູນນຳຜູ້ເປັນ A. (ຜູ້ເປັນ B ເບິ່ງຕາຕະລາງຢູ່ໜ້າທີ 44) . ຄູ ແລະ NP ເຮັດບົດສົນທະນາຕົວຢ່າງໃຫ້ເບິ່ງ.

<u>ຕົວຢ່າງ: A.</u>

ຄູ: ເປັນ A ຖາມ: たいいくは　なんようびですか。

NP: ເປັນ B ຕອບ: げつようびです。

ຄູ: ເປັນ A ຖາມ: なんじから　なんじまでですか。

NP: ເປັນ B ຕອບ: ごご　7:30から　3:10までです。

<u>ຕົວຢ່າງ: B</u>

ຄູ: ເປັນ B ຖາມ: えいごは　なんようびですか。

NP: ເປັນ A ຕອບ: げつようび　と　もくようびです。

ຄູ: ເປັນ B ຖາມ: なんじから　なんじまでですか。

NP: ເປັນ A ຕອບ: げつようびは　10:10から　11:15までです。もくようびは　8:10から　9:10までです。

A たいいく taiiku すうがく suugaku りか rika

| | げつ<br>getsu | か<br>ka | すい<br>sui | もく<br>moku | きん<br>kin |
|---|---|---|---|---|---|
| 1<br>(8:10-9:00) | ちょうれい<br>chooree | | にほんご<br>nihon-go | **えいご<br>eego** | **しゃかい<br>shakai** |
| 2<br>(9:00-9:50) | **しゃかい<br>shakai** | | | | |
| 3・4<br>(10:10-11:50) | **えいご<br>eego** | ラオスご<br>raosu-go | | IT | |
| ひるやすみ hiruyasumi | | | | | |
| 5・6<br>(13:30-15:10) | | **おんがく<br>ongaku** | かつどう<br>katsudoo | ラオスご<br>raosu-go | |

B えいご eego しゃかい shakai おんがく ongaku

| | げつ<br>getsu | か<br>ka | すい<br>sui | もく<br>moku | きん<br>kin |
|---|---|---|---|---|---|
| 1<br>(8:10-9:00) | ちょうれい<br>chooree | **すうがく<br>suugaku** | にほんご<br>nihon-go | | **しゃかい<br>shakai** |
| 2<br>(9:00-9:50) | | | | | |
| 3・4<br>(10:10-11:50) | | ラオスご<br>raosu-go | **りか<br>rika** | IT | **りか<br>rika** |
| ひるやすみ hiruyasumi | | | | | |
| 5・6<br>(13:30-15:10) | **たいいく<br>taiiku** | | かつどう<br>katsudoo | ラオスご<br>raosu-go | **すうがく<br>suugaku** |

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູພະຍາຍາມອະທິບາຍວິທີເຮັດບົດຝຶກຫັດດ້ວຍການເຮັດເປັນຕົວຢ່າງໃຫ້ນັກຮຽນເບິ່ງ.
- ພາຍຫຼັງຝຶກຫັດ ໃຫ້ນັກຮຽນປຽບທຽບຄຳຕອບທີ່ໄດ້ ແລະ ສົນທະນາກັບໝູ່ໃນຫ້ອງ.

よみましょう

❖ **ຄາດໝາຍ**: ໃຫ້ນັກຮຽນສາມາດເບິ່ງຕາຕະລາງຮຽນ ແລະຮູ້ທັກສະການອ່ານເພື່ອຈັບຄຳສັບຫຼັກໃນບົດອ່ານໄດ້.

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບຕາຕະລາງ A, B, C ມີຄວາມແຕກຕ່າງກັນແນວໃດ?
2) ບົດອ່ານກ່ຽວກັບຕາຕະລາງຂອງ ນາງ ນ້ອຍ ມີເນື້ອໃນແນວໃດ? ນັກຮຽນອ່ານບົດ ແລ້ວຂີດກ້ອງເອົາຄຳສັບຫຼັກທີ່ເປັນຄຳຕອບ (ໃຫ້ເວລາ 5 ນາທີ).
3) ຟັງ CD ເພື່ອຄວາມເຂົ້າໃຈເນື້ອໃນຂອງບົດອ່ານ.
4) ຄູຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈ ຫຼື ບໍ່? ເຊັ່ນ: ນາງ ນ້ອຍ ມັກວິຊາຫຍັງ? ວິຊານັ້ນຮຽນມື້ໃດ?
5) ຟັງ CD ແລະ ເບິ່ງປຶ້ມໄປນຳ.
6) ປຽບທຽບຄຳຕອບນຳໝູ່ທີ່ນັ່ງທາງຂ້າງ.





わたしは　おんがくが　すきです。
おんがくは　もくようびです。
すうがくも　すきです。
すうがくは　げつようびと　すいようびです。

C.

| | げつ | か | すい | もく | きん |
|---|---|---|---|---|---|
| 1 | ちょうれい | りか | すうがく | しゃかい | えいご |
| 2 | しゃかい | | | | |
| 3 | すうがく | えいご | ラオスご | にほんご | ラオスご |
| 4 | | | | | |
| 5 | たいいく | IT | | おんがく | りか |
| 6 | | | | | |

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ນັກຮຽນສັງເກດບົດອ່ານ ແລະ ຕາຕະລາງ ດ້ວຍການຈັບຄຳສັບຫຼັກ ແລະ ໃຫ້ສາມາດເຂົ້າໃຈເນື້ອໃນບົດອ່ານນັ້ນໄດ້.

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ** ハ、バ、パ

1) ທວນຄືນຕົວອັກສອນຄະຕະຄະນະ, ອ່ານຕົວອັກສອນແຖວ ナ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ ハ、バ、パ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ ハ、バ、パ.
7) ໃນບາງຄຳສັບ ມີຕົວອັກສອນທີ່ບໍ່ທັນໄດ້ຮຽນ; ຄຳສັບເຫຼົ່ານັ້ນໃຫ້ແຕ້ມຕາມເສັ້ນທີ່ກຳນົດໄວ້. ສຳລັບຕົວອັກສອນທີ່ຮຽນແລ້ວໃຫ້ຝຶກຂຽນດ້ວຍຕົນເອງ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ**

1) __ホ__ 2) __フ__ 3) __ヘ__ 4) __ハ__ 5) __ヒ__

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ການຖາມ "ເຈົ້າມັກວິຊາໃດ? ຮຽນມື້ໃດແດ່?" ພາສາຍີ່ປຸ່ນເວົ້າແນວໃດ?
- ການຖາມ "ຮຽນວິຊາໃດ? ມື້ໃດ?" ພາສາຍີ່ປຸ່ນວ່າແນວໃດ?
- ວຽກບ້ານ: ໃຫ້ນັກຮຽນກະກຽມຕາຕະລາງຮຽນເພີ່ມ ຫຼື ຕາຕະລາງກິດຈະກຳຫຼັງເລີກຮຽນປະຈຳອາທິດຂອງຕົນ ເພື່ອມາເຮັດກິດຈະກຳໃນຊົ່ວໂມງຕໍ່ໄປ.

ຕົວຢ່າງການຂຽນຕາຕະລາງ:

| | げつ | か | すい | もく | きん |
|---|---|---|---|---|---|
| 4:00 | | | | | |
| 5:00 | | | | | |



ຄັ້ງທີ 3

かつどう ກິດຈະກຳ

ກິດຈະກຳຫຼັງຈາກເລີກຮຽນຂອງຂ້ອຍ

① ຂຽນຕາຕະລາງເວລາຂອງຕົນເອງຫຼັງຈາກເລີກຮຽນ.
ຕົວຢ່າງ: ໄປຮຽນເພີ່ມແຕ່ຈັກໂມງຫາຈັກໂມງ?
ຫຼິ້ນກິລາແຕ່ຈັກໂມງຫາຈັກໂມງ?
② ເອົາຕາຕະລາງເວລາໃຫ້ໝູ່ເບິ່ງ ແລະ ອະທິບາຍເປັນພາສາຍີ່ປຸ່ນ.

まとめ ທວນຄືນ

〜 から 〜 までです。
〜kara 〜made desu.
〜 は なんようびですか。
〜wa nan-yoobi desu ka.
〜 ようびです。
〜yoobi desu

ຖາມໝູ່ກ່ຽວກັບ 2 ວິຊາ: ຮຽນມື້ໃດ? ຮຽນແຕ່ຈັກໂມງຫາຈັກໂມງ?

Can-Do Check ★☆☆ ໄດ້ໜ້ອຍໜຶ່ງ ★★☆ ໄດ້ພໍສົມຄວນ ★★★ ໄດ້ດີ

1) ສາມາດຖາມ-ຕອບກ່ຽວກັບມື້ຮຽນໄດ້ ☆☆☆
2) ສາມາດຖາມ-ຕອບ ເວລາເລີ່ມຕົ້ນ ແລະ ເວລາສິ້ນສຸດຂອງຊົ່ວໂມງ ຮຽນໄດ້ ☆☆☆
ສິ່ງໃດທີ່ຍັງເຮັດບໍ່ໄດ້ດີ: ____________________
____________________

46

## かつどう "ກິດຈະກຳຫຼັງຈາກເລີກຮຽນຂອງຂ້ອຍ"

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າກ່ຽວກັບຕາຕະລາງຫຼັງເລີກຮຽນ.

❖ **ທວນຄືນບົດຮຽນຜ່ານມາ**

- ໃຫ້ທວນຄືນບົດຮຽນຜ່ານມາໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
- ທວນຄືນຄຳສັບກ່ຽວກັບວິຊາ ແລະ ຖາມ ມື້ໃດຮຽນຫຍັງ? ແຕ່ຈັກໂມງຫາຈັກໂມງ?

❖ **ຂັ້ນຕອນການສອນ**

1) ຂຽນຕາຕະລາງຫຼັງເລີກຮຽນຂອງຕົນເອງ
ໄປຮຽນເພີ່ມ ແຕ່ຈັກໂມງຫາຈັກໂມງ? ຫຼິ້ນກິລາ ແຕ່ຈັກໂມງຫາຈັກໂມງ? ເວລາຫວ່າງເຮັດຫຍັງ? ແຕ່ຈັກໂມງຫາຈັກໂມງ? ຫຼັງຈາກຂຽນແລ້ວ ເອົາຕາຕະລາງເວລາໃຫ້ໝູ່ເບິ່ງ ແລ້ວອະທິບາຍເປັນ ພາສາຍີ່ປຸ່ນ.

ຕົວຢ່າງ: じゅくは かようび と もくようびです。
ごご 5じはんから 7じまでです。
サッカーは すいようびです。
ごご 6じから 7じはんまでです。

2) ເອົາຕາຕະລາງເວລາໃຫ້ໝູ່ນັ່ງທາງຂ້າງເບິ່ງ ແລະ ອະທິບາຍເປັນພາສາຍີ່ປຸ່ນ.
3) ນັກຮຽນອາດຈະເວົ້າ じゅく (ຮຽນເພີ່ມ), スポーツ (ຫຼິ້ນກິລາ), ジョギング. (ໄປແລ່ນອອກກຳລັງກາຍ). ຄູກະກຽມຄຳສັບທີ່ຄາດວ່ານັກຮຽນຈະໃຊ້ໃນຕາຕະລາງຫຼັງເລີກຮຽນ.
4) ຖ້ານັກຮຽນຄົນໃດບໍ່ມີກິດຈະກຳຫຍັງຫຼັງເລີກຮຽນ ກໍໃຫ້ຄິດສະຖານະການສົມມຸດແທນ.
5) ຄູໃຫ້ນັກຮຽນເອົາຕາຕະລາງຮຽນເພີ່ມຂອງຕົນ ແລ້ວນຳສະເໜີໃຫ້ໝູ່ໃນຫ້ອງຟັງ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູກຽມຕາຕະລາງສຳລັບນັກຮຽນທີ່ບໍ່ມີກິດຈະກຳຫຼັງເລີກຮຽນ ຫຼື ໃຫ້ນັກຮຽນລືມມຸດແທນ.

❖ **ທົບທວນຄືນບົດຮຽນ**

ຖາມໝູ່ 2 ວິຊາ ວ່າຮຽນມື້ໃດ? ຮຽນແຕ່ຈັກໂມງຫາຈັກໂມງ?

ຕົວຢ່າງ:

A: にほんごは　なんようびですか。

B: すいようびです。

A: なんじから　なんじまでですか。

B: ごぜん　９じから１１じはんまでです。

ຕົວຢ່າງ:

A: りかは　なんようびですか。

B: かようび　と　きんようびです。

A: なんじから　なんじまでですか。

B: かようびは　８じ１０ぷんから　９じ５０ぷんまでです。

きんようびは　１じはんから　３じ１０ぷんまでです。

❖ **Can-Do Check**

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.

❀ ຕາຕະລາງນັກຮຽນມັດທະຍົມຍີ່ປຸ່ນ ❀

✖ ຂ້າງລຸ່ມນີ້ແມ່ນຕາຕະລາງຮຽນຂອງນັກຮຽນມັດທະຍົມຍີ່ປຸ່ນແຫ່ງໜຶ່ງ. ລອງສົມທຽບກັບຕາຕະລາງຮຽນຂອງຕົນເອງເບິ່ງ.

| | ຈັນ | ອັງຄານ | ພຸດ | ພະຫັດ | ສຸກ | ເສົາ |
|---|---|---|---|---|---|---|
| 8:20-8:30 | ເຄົາລົບທຸງ | ການອ່ານ | ການອ່ານ | ການອ່ານ | ການອ່ານ | HR |
| 8:30-8:35 | | HR | | | | |
| 8:35-8:40 | ກະກຽມການຮຽນ-ການສອນ | | | | | |
| 8:40-9:30 | ພາສາຍີ່ປຸ່ນ | ຄະນິດສາດ | ພາສາອັງກິດ | ພາສາອັງກິດ | ສັງຄົມສາດ | ຄຸນສົມບັດ |
| 9:30-9:40 | ພັກຜ່ອນ | | | | | |
| 9:40-10:30 | ຄະນິດສາດ | ວິຈິດສິນ | ພາສາຍີ່ປຸ່ນ | ຄະນິດສາດ | ພາສາອັງກິດ | ພາສາຍີ່ປຸ່ນ |
| 10:30-10:40 | ພັກຜ່ອນ | | | | | |
| 10:40-11:30 | ວິທະຍາສາດທຳມະຊາດ | ພາສາອັງກິດ | ສິລະປະດົນຕີ | ວິທະຍາສາດທຳມະຊາດ | ພະລະສຶກສາ | ຄະນິດສາດ |
| 11:30-11:40 | ພັກຜ່ອນ | | | | | HR |
| 11:40-12:30 | ວິທະຍາສາດທຳມະຊາດ | ພາສາຍີ່ປຸ່ນ | ວິທະຍາສາດທຳມະຊາດ | ເຕັກໂນໂລຊີ | ພາສາຍີ່ປຸ່ນ | ອະນາໄມ |
| 12:30-13:00 | ກິນເຂົ້າທ່ຽງຢູ່ໂຮງຮຽນ | | | | | |
| 13:00-13:25 | ພັກທ່ຽງ | | | | | |
| 13:25-14:15 | ພາສາອັງກິດ | ພະລະສຶກສາ | ສັງຄົມສາດ | ສັງຄົມສາດ | ຄະນິດສາດ | |
| 14:15-14:25 | ພັກຜ່ອນ | | HR | ພັກຜ່ອນ | | |
| 14:25-15:15 | ເຕັກໂນໂລຊີ | ຄວາມຮູ້ທົ່ວໄປ | ອະນາໄມ | ຄວາມຮູ້ທົ່ວໄປ | HR | |
| 15:15-15:25 | HR | | | HR | | |
| 15:25-15:40 | ອະນາໄມ | | | ອະນາໄມ | | |
| 15:40-18:00 | ກິດຈະກຳ | | | | | |

HR hoomu-ruumu ລວມຫ້ອງ

48

**<u>ຄຳລຳ</u>** **❀ ຕະຕະລາງນັກຮຽນມັດທະຍົມຍີ່ປຸ່ນ ❀**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນໄດ້ເຫັນຄວາມແຕກຕ່າງ ຫຼື ຄ້າຍຄືກັນຂອງຕາຕະລາງຮຽນໃນຍີ່ປຸ່ນ ແລະລາວໂດຍສັງເກດວິຊາຮຽນ ແລະ ຊົ່ວໂມງຮຽນ ມີຈຸດພິເສດແນວໃດ? ວິຊາໃດທີ່ບໍ່ມີຢູ່ລາວ ແລະ ວິຊາໃດທີ່ຢູ່ລາວມີ ແຕ່ຢູ່ໃນຍີ່ປຸ່ນບໍ່ມີ; ຍ້ອນຫຍັງ?

1) ສົນທະນາກັບນັກຮຽນກ່ຽວກັບຫົວຂໍ້ ແລະ ເນື້ອໃນຂອງຄຳລຳ ກ່ອນໄປເບິ່ງບົດສະຖານທີ່ຕ່າງໆຂອງໂຮງຮຽນມັດທະຍົມຍີ່ປຸ່ນ; ໃຫ້ນັກຮຽນສົນທະນາກ່ຽວກັບຕາຕະລາງຮຽນຂອງຫ້ອງຕົນວ່າ ມີວິຊາໃດແດ່?
2) ວິຊາ HR ແມ່ນວິຊາລວມຫ້ອງ. ຄູປະຈຳຫ້ອງຈະລວມຫ້ອງເພື່ອແຈ້ງການຕ່າງໆ ແລະ ແຈ້ງກ່ຽວກັບກິດຈະກຳ ຫຼື ປຶກສາຫາລືຮ່ວມກັນພາຍໃນຫ້ອງໃນເລື່ອງໃດໜຶ່ງ. ສ່ວນຫຼາຍບໍ່ໃຊ້ເວລາຫຼາຍປະມານ 5-10 ນາທີ. ໃນໜຶ່ງອາທິດຈະມີວິຊາ HR ທີ່ໃຊ້ເວລາດົນພໍສົມຄວນ. ໃນຊົ່ວໂມງນັ້ນຄະນະຫ້ອງຈະລາຍງານຄູກ່ຽວກັບບັນຫາໃດໜຶ່ງທີ່ຕ້ອງຕັດສິນໃຈຮ່ວມກັນ ຫຼື ສະພາບໂດຍລວມຂອງນັກຮຽນໃນຫ້ອງ. ຫຼັງຈາກລວມຫ້ອງແລ້ວ, ຈະອະນາໄມລວມກ່ອນກັບເຮືອນທຸກມື້. ນອກຈາກນັ້ນ, ຫຼັງຈາກເລີກຮຽນ ແມ່ນຊົ່ວໂມງກິດຈະກຳສະໂມສອນ; ໃນຊົ່ວໂມງນີ້ ນັກຮຽນສາມາດເລືອກກິດຈະກຳທີ່ຕົນມັກໂດຍເຮັດເປັນກຸ່ມ ແລະ ຮຽນເພີ່ມນອກໂມງຮຽນ ຮ່ວມກັບຮຸ່ນອ້າຍ, ຮຸ່ນເອື້ອຍທີ່ມັກໃນກິດຈະກຳດຽວກັນ. ແຕ່ການເຂົ້າຮ່ວມກິດຈະກຳຫຼັງເລີກຮຽນນີ້ ນັກຮຽນທັງໝົດບໍ່ຈຳເປັນເຂົ້າຮ່ວມກໍໄດ້. ເຂົາເຈົ້າສາມາດເລືອກຕາມຄວາມສະໝັກໃຈ, ເນື່ອງຈາກວ່າຖ້າໄດ້ເຂົ້າຮ່ວມແລ້ວ ຈະຕ້ອງໄດ້ດຸໝັ່ນຝຶກຊ້ອມເພື່ອແຂ່ງຂັນກັບໂຮງຮຽນອື່ນໆ ໃນແຕ່ລະປີ.
   ນັກຮຽນຄົນໃດທີ່ມັກກິດຈະກຳສິລະປະກຳ ເຊັ່ນ: ມັກດົນຕີ ຫຼື ແຕ້ມຮູບກໍຈະມີຫ້ອງສະເພາະ ໃຫ້ສາມາດຝຶກຊ້ອມເປັນກຸ່ມຮ່ວມກັບຜູ້ມັກກິດຈະກຳນັ້ນໆ. ສຳລັບນັກຮຽນຜູ້ມັກກິລາປະເພດຕ່າງໆ ກໍຈະສາມາດເຂົ້າຮ່ວມກິດຈະກຳຝຶກຊ້ອມກິລາປະເພດຕ່າງໆໄດ້ ຫຼັງຈາກເລີກຮຽນໃນແຕ່ລະມື້. ໃນແຕ່ລະກິດຈະກຳກໍຈະມີຄູຜູ້ຮັບຜິດຊອບສອນ ແລະ ຊ່ວຍແນະນຳ.





だい１６か　わたしのいちにち　(ກິດຈະວັດໃນໜຶ່ງມື້ຂອງຂ້ອຍ)



ຄັ້ງທີ 1

**ໜ້າປົກ**

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າກ່ຽວກັບກິດຈະວັດປະຈຳວັນໃນໜຶ່ງມື້ຂອງຕົນເອງໄດ້.




❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບເນື້ອໃນບົດຮຽນ ດ້ວຍການເບິ່ງຮູບໃນໜ້າປົກ ແລ້ວຈິນຕະນາການເຖິງສະຖານະການ ແລະ ສິ່ງທີ່ຈະໄດ້ຮຽນໃນບົດນີ້.
2) ສົນທະນາກັບນັກຮຽນກ່ຽວກັບກິດຈະວັດປະຈຳວັນຂອງແຕ່ລະຄົນວ່າເປັນແນວໃດ?
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do.
    1. ສາມາດເວົ້າຊີວິດປະຈຳວັນໃນໜຶ່ງມື້ໄດ້
    2. ສາມາດຖາມ-ຕອບວ່າ ເຮັດຫຍັງ, ຕອນຈັກໂມງ



**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ສົນທະນາກ່ຽວກັບກິດຈະວັດປະຈຳວັນຂອງນັກຮຽນ ພ້ອມທັງທວນຄືນການເວົ້າກ່ຽວກັບໂມງ.




1. **ເຮັດຫຍັງ?**

ききましょう **"ກິດຈະວັດຕ່າງໆ"**

❖ **ຄາດໝາຍ**:

ໃຫ້ນັກຮຽນຝຶກເວົ້າກິດຈະວັດການເຄື່ອນໄຫວຕ່າງໆ ພ້ອມທັງບອກຄວາມໝາຍຂອງແຕ່ລະການເຄື່ອນໄຫວ.

❖ **ຂັ້ນຕອນການສອນ**

1) ຄູພານັກຮຽນສົນທະນາກ່ຽວກັບຮູບຂອງການເຄື່ອນໄຫວ ຫຼື ກິດຈະວັດປະຈຳວັນໃນໜຶ່ງມື້.
2) ໃຫ້ນັກຮຽນເບິ່ງຮູບແລ້ວຖາມກ່ຽວກັບຄວາມໝາຍຂອງຄຳສັບ.
3) ຟັງ CD ພ້ອມທັງເບິ່ງຮູບກິດຈະວັດຕ່າງໆ.
4) ຟັງ CD ແລ້ວຖາມກ່ຽວກັບສຽງ ຫຼື ຄຳສັບທີ່ໄດ້ຍິນ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄຳສັບ ໃຫ້ນັກຮຽນຝຶກເວົ້າຄຳສັບ.
7) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄຳສັບດ້ວຍພາສາລາວ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄຳສັບກ່ຽວກັບການເຄື່ອນໄຫວ ຫຼື ກິດຈະວັດຕ່າງໆຈະມີຄຳຊ່ວຍ を、へ ໃນສຳນວນດັ່ງກ່າວ. ສະນັ້ນ, ໃຫ້ນັກຮຽນຈື່ເປັນລັກສະນະສຳນວນ ເຊັ່ນ: うちへ かえります。
- ສ້າງຄວາມເຂົ້າໃຈໃຫ້ນັກຮຽນຮູ້ນຳໃຊ້ ～へ きます。ແລະ ～へ いきます。

はなしましょう **"ຖາມ-ຕອບກ່ຽວກັບກິດຈະວັດຕ່າງໆ"**

❖ **ຄາດໝາຍ**: ໃຫ້ນັກຮຽນຮູ້ຕັ້ງຄຳຖາມ ແລະ ຕອບກ່ຽວກັບກິດຈະວັດຕ່າງໆ.

- ຄູ/NP ເຮັດບົດສົນທະນາຕົວຢ່າງ. ຫຼັງຈາກນັ້ນ, ໃຫ້ນັກຮຽນຝຶກສົນທະນາເປັນຄູ່.

**ຕົວຢ່າງ**: A： __________さん、なにを　しますか。

～san, nani o shimasu ka.

B： インターネット　を　します。

Intaanetto o shimasu.

- ໃຫ້ນັກຮຽນຝຶກເວົ້າເປັນຄູ່ໂດຍໃຊ້ຄຳສັບ ແລະ ສຳນວນຂ້າງເທິງ. ຫຼັງຈາກນັ້ນ, ໃຫ້ປ່ຽນຜຽນກັນຖາມ-ຕອບ.
- ໃຫ້ນັກຮຽນປະມານ 2-3 ຄູ່ ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

## はなしましょう "ເວົ້າສິ່ງທີ່ເຮັດເປັນປະຈຳ, ເຮັດບາງຄັ້ງ ແລະ ບໍ່ຄ່ອຍໄດ້ເຮັດ"

- **ຄາດໝາຍ**: ໃຫ້ນັກຮຽນສາມາດເວົ້າກິດຈະວັດທີ່ຕົນເຮັດປະຈຳ, ເຮັດບາງຄັ້ງ ຫຼື ບໍ່ຄ່ອຍໄດ້ເຮັດ.
- **ຂັ້ນຕອນການສອນ**:

1) ໃຫ້ນັກຮຽນຂຽນສິ່ງເຮັດເປັນປະຈຳ, ເຮັດບາງຄັ້ງຄາວ, ບໍ່ຄ່ອຍໄດ້ເຮັດ ແລະ ບໍ່ເຮັດເລີຍ. ຫຼັງຈາກນັ້ນ, ສົນທະນາກັບໝູ່; ມີອັນໃດແດ່ທີ່ເຮັດຄືກັນ ແລະ ເຮັດຕ່າງກັນກັບໝູ່?

- ທວນຄືນການນຳໃຊ້ຄຳສັບ "いつも、ときどき、あまり、ぜんぜん" ໂດຍໃຫ້ນັກຮຽນສ້າງປະໂຫຍກໃນແຕ່ລະຄຳສັບ.
- ນັກຮຽນສ້າງປະໂຫຍກ ຕົວຢ່າງ: いつも　ほんを　よみます。
- ນັກຮຽນຈະນຳໃຊ້ຄຳສັບເຫຼົ່ານີ້ເພື່ອບອກຄວາມຖີ່ທີ່ຕົນເອງເຮັດກິດຈະກຳໃດໜຶ່ງວ່າເຮັດ ເລື້ອຍໆບໍ່? ເຮັດເປັນປະຈຳ ຫຼື ບໍ່? ໃຫ້ຄູອ່ານບົດຕົວຢ່າງໃຫ້ຟັງຕື່ມ.

ຕົວຢ່າງ:

わたしは　いつも　サッカーを　します。
Watashi wa itsumo sakkaa o shimasu.
ときどき　おんがくを　ききます。
Tokidoki ongaku o kikimasu.
あまり　インターネットを　しません。
Amari intaanetto o shimasen.
ぜんぜん　ゲームを　しません。
Zenzen geemu o shimasen.

2) ຄູຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈຄວາມໝາຍຂອງປະໂຫຍກ ຫຼື ບໍ່ ເຊັ່ນ: ລາວເຮັດຫຍັງເປັນປະຈຳ? ສິ່ງທີ່ລາວບໍ່ເຮັດເລີຍແມ່ນຫຍັງ?
3) ນັກຮຽນຕອບ. ຖ້ານັກຮຽນຕອບຖືກສະແດງວ່ານັກຮຽນເຂົ້າໃຈເນື້ອໃນ.
4) ໃຫ້ນັກຮຽນຂຽນກິດຈະກຳທີ່ຕົນເອງເຮັດເປັນປະຈຳ, ເຮັດບາງຄັ້ງ ຫຼື ບໍ່ຄ່ອຍໄດ້ເຮັດເລີຍດ້ວຍການຂຽນຄຳສັບ 4 ຄຳ ໃສ່ໃນ (　).

ຕົວຢ່າງ:

いつも　itsumo （じゅくへ　いきます。）
ときどき　tokidoki （ほんを　よみます。　）
あまり　amari （テレビを　みません。）
ぜんぜん　zenzen （ゲームを　しません。）

5) ນັກຮຽນຝຶກເວົ້າເປັນຄູ່; ຫຼັງຈາກນັ້ນ, ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ຟັງ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ທວນຄືນການນຳໃຊ້ いつも, ときどき, あまり ແລະぜんぜん

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ マ**

1) ທວນຄືນຕົວອັກສອນຄະຕະຄະນະ, ອ່ານຕົວອັກສອນແຖວ ナ、ハ、バ、パ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ マ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ マ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ**

1)___マ___2)___メ___3)___モ___4)___ム___5)___ミ___

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຢາກຖາມວ່າ "ເຮັດຫຍັງ? ພາສາຍີ່ປຸ່ນວ່າແນວໃດ".
- ໃຫ້ບອກກິດຈະວັດທີ່ເຈົ້າເຮັດເປັນປະຈຳ, ເຮັດບາງຄັ້ງຄາວ, ບໍ່ຄ່ອຍໄດ້ເຮັດ ແລະ ບໍ່ເຮັດເລີຍ.
- **ວຽກບ້ານ**: ໃຫ້ນັກຮຽນກະກຽມຕະຕາລາງເວລາເຮັດກິດຈະວັດໃນວັນອາທິດຂອງຕົນເອງ.



ຄັ້ງທີ 2

## ききましょう “ກິດຈະວັດໃນມື້ໜຶ່ງຂອງນາງນ້ອຍ”

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຟັງ ແລະ ຈື່ຄໍາສັບທີ່ໃຊ້ເວົ້າກ່ຽວກັບກິດຈະວັດຕ່າງໆໃນມື້ໜຶ່ງ.

❖ **ຂັ້ນຕອນການສອນ**

1) ທວນຄືນຄໍາສັບກ່ຽວກັບການເວົ້າກິດຈະວັດຕ່າງໆ ເປັນພາສາຍີ່ປຸ່ນ.
2) ສົນທະນາກ່ຽວກັບຮູບວ່າແຕ່ລະຮູບແມ່ນກິດຈະວັດຫຍັງແດ່? ເບິ່ງຮູບ a - m ມີຮູບຫຍັງແດ່?
3) ຄູເຮັດຂໍ້1ເປັນຕົວຢ່າງໃຫ້ນັກຮຽນ ເພື່ອໃຫ້ນັກຮຽນເຂົ້າໃຈວິທີການໝາຍ.
4) ຟັງ CD ແລ້ວຂຽນຕົວອັກສອນ a - m ຕາມທີ່ໄດ້ຍິນ.
5) ກວດຄໍາຕອບນໍາໝູ່ທີ່ນັ່ງທາງຂ້າງ.

| | じかん<br>jikan | なにをしますか<br>nani o shimasu ka |
|---|---|---|
| ex | 6:00 | a |
| 1 | | c |
| 2 | 6:30 | m |
| 3 | 7:00 | d |
| 4 | 4:30 | l |
| 5 | 6:00 | h |
| 6 | 6:30 | m |
| 7 | | e |
| 8 | | f |
| 9 | 9:00 | b |

ຄໍາຕອບໃນ CD

わたしは　あさ６じに　おきます。
それから　シャワーを　あびます。
６じはんに　あさごはんを　たべます。
７じに　がっこうへ　きます。
がっこうは　７じはんから　４じまでです。
４じはんに　じゅくへ　いきます。
６じに　うちへ　かえります。
６じはんに　ばんごはんを　たべます。
それから　しゅくだいを　します。
ときどき　おんがくを　ききます。
９じに　ねます。



**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ໃຫ້ນັກຮຽນເອົາໃຈໃສ່ຟັງ ຄໍາສັບທີ່ກ່ຽວກັບ ໂມງ, ເວລາ ແລະ ກິດຈະວັດທີ່ລະບຸໄວ້ a - m.
- ບາງຄໍາຕອບສາມາດໃຊ້ໄດ້ຫຼາຍເທື່ອ ເຊັ່ນ ຂໍ້ m.




## かいわ "ການຖາມ-ຕອບກ່ຽວກັບກິດຈະວັດຕ່າງໆ"

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ວິທີຖາມ-ຕອບກ່ຽວກັບກິດຈະວັດຂອງຕົວລະຄອນໃນບົດສົນທະນາຕົວຢ່າງ.

❖ **<u>ຂັ້ນຕອນການສອນ</u>**

1) ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບເລື່ອງຫຍັງ? ຢູ່ໃນສະຖານນະການແນວໃດ?
2) ນັກຮຽນສັງເກດຈາກການເບິ່ງຮູບພາບ ແລະ ຕອບຕາມຄວາມຄິດ.
3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
4) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ.
5) ຟັງ CD ແລ້ວຝຶກອອກສຽງ.
6) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
7) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

## はなしましょう "ຖາມ-ຕອບນຳໝູ່ທີ່ນັ່ງທາງຂ້າງກ່ຽວກັວເວລາຕື່ນນອນແລະເຂົ້ານອນ"

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນຮູ້ຖາມ-ຕອບວ່າ ຕື່ນຈັກໂມງ, ນອນຈັກໂມງ?

1) ຂຽນເວລາຕື່ນນອນ ແລະ ເຂົ້ານອນຂອງຕົນເອງ ແລ້ວເວົ້າໃຫ້ໝູ່ຟັງ.

<u>ຕົວຢ່າງ</u>: A: ～さん、なんじに　おきますか。
B: ６じはんに　おきます。
A: はやいですね。

| | おきます okimasu | ねます nemasu |
|---|---|---|
| わたし watashi | 7:00 | 10:00 |
| ～ さん san | 6:30 | 9:00 |

2) ໃຫ້ແຕ່ລະຄົນຖາມໝູ່ໃຫ້ໄດ້ 3 ຄົນແລ້ວຂຽນໃສ່ຕາຕະລາງ.
3) ນັກຮຽນເປັນຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

## はなしましょう "ຂຽນກິດຈະວັດໃນມື້ໜຶ່ງ"



1) ຂຽນກິດຈະວັດປະຈຳວັນໃນມື້ໜຶ່ງຂອງຕົນເອງ 5 ຢ່າງ ພ້ອມທັງບອກເວລາ.
2) ຫຼັງຈາກນັ້ນ,ຝຶກເວົ້າໃຫ້ໝູ່ຟັງເພື່ອສົມທຽບຄຳຕອບຂອງໝູ່ໃນຫ້ອງ.
3) ຄູເຮັດປະໂຫຍກຕົວຢ່າງໃຫ້ນັກຮຽນເບິ່ງ
4) ນັກຮຽນເຝິກເວົ້າເປັນຄູ່

| | | |
|---|---|---|
| <u>ຕົວຢ່າງ:</u> | おきます。 | （６：３０） |
| | がっこうへ きます。 | （８：００） |
| | うちへ かえります。 | （４：３０） |
| | ごはんを たべます。 | （７：００） |
| | ねます。 | （９：００） |



## よみましょう

### "ຈັດຮຽງລຳດັບກິດຈະວັດປະຈຳວັນຂອງທ້າວມິ່ງ"

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນສັງເກດຈາກຮູບ ແລະ ຄຳສັບຫຼັກຂອງບົດອ່ານ ເພື່ອຊອກຫາຄຳຕອບ.

❖ **<u>ຂັ້ນຕອນການສອນ</u>**

1) ຄູອະທິບາຍກ່ຽວກັບວິທີອ່ານ ໂດຍເລີ່ມຕົ້ນຈາກການບອກຈຸດປະສົງ ແລະ ສະຖານະການຂອງບົດອ່ານນັ້ນ "ເບິ່ງຮູບທ້າວ ມິ່ງ ມີກິດຈະກຳໃດແດ່? ໃຫ້ເວົ້າເປັນພາສາຍີ່ປຸ່ນ?".
2) ນັກຮຽນອ່ານບົດ ແລ້ວຂີດກ້ອງເອົາຄຳສັບຫຼັກທີ່ເປັນຄຳຕອບ ແລະ ກົງກັນກັບກິດຈະວັດຕ່າງໆທີ່ມີຢູ່ໃນຮູບ (ໃຫ້ເວລາ 5 ນາທີ).
3) ນັກຮຽນສົມທຽບຄຳຕອບນຳກັນ.
4) ຄຳຕອບ: ຄູຖາມນັກຮຽນກ່ຽວກັບຄຳສັບຫຼັກ. ຫຼັງຈາກນັ້ນ, ເວົ້າຄຳຕອບຂອງບົດອ່ານ.



にちようびは　いつも　７じはんに　おきます。
あさ　**サッカーを　します**。１２じに　**ひるごはんを　たべます**。ごご　**しゅくだいを　します**。それから　**まんがを　よみます**。わたしの　しゅみは　まんがです。よる　**インターネットを　します**。あまり　**ゲームは　しません**。９じはんに　ねます。



( 3 )



(　)



( 5 )



( 1 )



( 2 )




( 4 )

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- あまり　ゲームは　しません。ໝາຍຄວາມວ່າໃນປົດອ່ານລາວບໍ່ຄ່ອຍຫຼິ້ນເກມ. ສະນັ້ນ, ຈະບໍ່ມີກິດຈະກໍາຫຼິ້ນເກມໃນຄໍາຕອບ.

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ ヤ**

1) ທວນຄືນຕົວອັກສອນຄະຕະຄະນະ; ອ່ານ ແລະ ຂຽນຕົວອັກສອນແຖວ マ.
2) ຄູໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ ヤ.
4) ຄູ/NP ນໍາພານັກຮຽນອ່ານຕົວອັກສອນເປັນລໍາດັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ ヤ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ.**

1) __ユ__ 2) __ヤ__ 3) __ヨ__ 4) __ユ__ 5) __ヨ__

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຖາມ-ຕອບວ່າ “ເຈົ້າຕື່ນຈັກໂມງ? ນອນຈັກໂມງ? ” ພາສາຍີ່ປຸ່ນວ່າແນວໃດ?
- ຈົ່ງເວົ້າກິດຈະວັດຫຼັງເລີກຮຽນ 3 ຢ່າງ ພ້ອມທັງບອກເວລາ.
- ວຽກບ້ານ: ໃຫ້ນັກຮຽນກະກຽມຕະຕາລາງກິດຈະວັດໃນວັນອາທິດເພື່ອເຮັດກິດຈະກຳໃນຊົ່ວໂມງຕໍ່ໄປ.



ຄັ້ງທີ 3

かつどう ກິດຈະກຳ

ຈັດລຳດັບສິ່ງທີ່ຄົນເຮັດໃນວັນອາທິດ

① ຂຽນກິດຈະກຳໃນວັນອາທິດຂອງຕົນ 3 ຢ່າງ.
② ສົນທະນາເປັນກຸ່ມນ້ອຍ 5-6 ຄົນ.
③ ຮຽງລຳດັບກິດຈະກຳທີ່ເຮັດຫຼາຍກວ່າໝູ່ 1-3 ໃນວັນອາທິດ.
④ ນຳສະເໜີ.

まとめ ທວນຄືນ

なにを　しますか。
Nani o shimasu ka.
サッカーを　します。
Sakkaa o shimasu.
なんじに　おきますか。
Nan-ji ni okimasu ka.
６じに　おきます。
Roku-ji ni okimasu.

ຖາມໝູ່: ປົກກະຕິຕື່ນນອນ ແລະ ເຂົ້ານອນຈັກໂມງ?

Can-Do Check ★☆☆ ໄດ້ໜ້ອຍໜຶ່ງ ★★☆ ໄດ້ພໍສົມຄວນ ★★★ ໄດ້ດີ

1) ສາມາດເວົ້າຊີວິດປະຈຳວັນໃນໜຶ່ງມື້ໄດ້ ☆☆☆
2) ສາມາດຖາມ-ຕອບວ່າ ເຮັດຫຍັງ, ຕອນຈັກໂມງ ☆☆☆
ສິ່ງໃດທີ່ຍັງເຮັດບໍ່ໄດ້ດີ: ____________

56

かつどう **“ຈັດລຳດັບສິ່ງທີ່ຄົນເຮັດໃນວັນອາທິດ”**

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າກິດຈະວັດປະຈຳວັນໃນວັນອາທິດເປັນພາສາຍີ່ປຸ່ນໄດ້.

❖ **ທວນຄືນບົດຮຽນຜ່ານມາ**

ທວນຄືນຫົວບົດ ແລະ ເນື້ອໃນຂອງບົດຮຽນນີ້, ທວນຄືນຄຳສັບ ແລະ ປະໂຫຍກໃນການຖາມ-ຕອບກິດຈະວັດ ແລະ ໂມງ, ເວລາ.



❖ **ຂັ້ນຕອນການສອນ**

1) ຂຽນກິດຈະວັດໃນວັນອາທິດຂອງຕົນເອງ 3 ຢ່າງ.
2) ຈັດແບ່ງກຸ່ມ ກຸ່ມລະ 5-6 ຄົນ ແລ້ວສົນທະນາກ່ຽວກັບກິດຈະວັດປະຈ□າວັນອາທິດຂອງແຕ່ລະຄົນ.

ຕົວຢ່າງ: わたしは テレビを みます。

インターネットを します。

それから しゅくだいを します。

3) ຄູຍາຍເຈ້ຍໃຫ້ນັກຮຽນ; ຂຽນລຳດັບຄຳຕອບທີ່ຖືກເລືອກຫຼາຍກວ່າໝູ່ ແຕ່ອັນດັບ1-3.
4) ໃຫ້ແຕ່ລະກຸ່ມຂຶ້ນນຳສະເໜີໃຫ້ໝູ່ໃນຫ້ອງຟັງ.

ຕົວຢ່າງ: わたしたちの　グループについて　はっぴょうします。
にちようび　なにを　しますか。
インターネットを　します。４にんです。
しゅくだいを　します。３にんです。
サッカーをします。ひとりです。
おわります。
ありがとうございました。

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູກະກຽມຄຳສັບທີ່ກ່ຽວກັບກິດຈະກຳຕ່າງໆ ເຊັ່ນ: さんぽを　します。(ຍ່າງຫຼິ້ນ), つりを　します。(ຕຶກເບັດ), がいしょくを　します。(ໄປກິນເຂົ້າຂ້າງນອກ), えいがを　みます。(ເບິ່ງໜັງ), ともだちのうちへ　いきます。(ໄປເຮືອນໝູ່)...

❖ **ທົບທວນຄືນບົດຮຽນ**
- ທວນຄືນຄຳສັບກ່ຽວກັບກິດຈະວັດຕ່າງໆ.
- ໃຫ້ນັກຮຽນຖາມໝູ່ວ່າ ປົກກະຕິ ຕື່ນນອນ ແລະ ເຂົ້ານອນຈັກໂມງ?

いつも　なんじに　おきますか。

なんじに　ねますか。

## Can-Do Check

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຍາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.


♚ ກິດຈະກຳຫຼັງເລີກຮຽນຂອງນັກຮຽນມັດທະຍົມຍີ່ປຸ່ນ ♚

✖ ຂ້າງລຸ່ມນີ້ແມ່ນຮູບຕົວຢ່າງກິດຈະກຳຂອງນັກຮຽນມັດທະຍົມຍີ່ປຸ່ນທີ່ເຮັດຫຼັງເລີກຮຽນ. ເຈົ້າເດ, ຫຼັງຈາກເລີກຮຽນເຮັດຫຍັງແດ່? ສິ່ງທີ່ເຮັດຄືກັນ ແລະ ເຮັດຕ່າງກັນແມ່ນຫຍັງ? ຄິດວ່າເປັນຫຍັງຈຶ່ງຕ່າງກັນ?

58

**ຄຳລຳ** ❀ **ກິດຈະກຳຫຼັງເລີກຮຽນຂອງນັກຮຽນມັດທະຍົມຍີ່ປຸ່ນ** ❀

❖ **ຄາດໝາຍ**

ໃຫ້ນັກຮຽນຮູ້ກິດຈະກຳຫຼັງຈາກເລີກຮຽນຂອງນັກຮຽນຍີ່ປຸ່ນມີຄວາມແຕກຕ່າງກັບນັກຮຽນລາວແນວໃດ?

❖ **ຂັ້ນຕອນການສອນ**

ກ່ອນເຂົ້າໄປເບິ່ງບົດຄວາມໃນຄຳລຳ; ໃຫ້ນັກຮຽນເບິ່ງຮູບ ແລະ ສົນທະນາກັນວ່າ ມີກິດຈະກຳຫຍັງແດ່?



1) ນັກຮຽນມັດທະຍົມຍີ່ປຸ່ນມີກິດຈະກຳຫຼາຍຢ່າງຫຼັງເລີກຮຽນ ເຊັ່ນ: ໄປຮຽນເພີ່ມ ຫຼື ເຂົ້າຮຽນດົນຕີ, ເຂົ້າສະໂມສອນກິລາຕ່າງໆ. ຮູບທີ່ສະແດງໃນປຶ້ມແບບຮຽນນີ້ ແມ່ນຕົວຢ່າງການເຮັດກິດຈະກຳຫຼັງເລີກຮຽນຂອງນັກຮຽນມັດທະຍົມຍີ່ປຸ່ນ ເຊັ່ນ: ຮູບທີ 1: ແມ່ນການເຂົ້າສະໂມສອນຝຶກກິລາ; ນັກຮຽນທີ່ມັກຫຼິ້ນກິລາ ຈະເຂົ້າຮ່ວມໃນກຸ່ມສະໂມສອນກິລາ ຊຶ່ງມີຄູຝຶກຊ່ວຍແນະນຳວິທີການຫຼິ້ນ. ຮູບທີ 2: ຮຽນຮູ້ການຫຼິ້ນດົນຕີ; ນັກຮຽນທີ່ມັກດົນຕີກໍຈະເຂົ້າຮຽນໂຮງຮຽນສອນດົນຕີ. ເຂົາເຈົ້າສາມາດຝຶກຫຼິ້ນດົນຕີປະເພດຕ່າງໆທີ່ຕົນເອງຢາກຫຼິ້ນ ແລະ ບາງຄັ້ງກໍຈະມີການແຂ່ງຂັນ ແລະ ສະແດງໃນເວທີຕ່າງໆ. ຮູບທີ 3: ນັກຮຽນບາງຄົນ ຫຼັງເລີກຮຽນກໍເມືອເຮືອນ ຫຼິ້ນເກມພັກຜ່ອນຢູ່ເຮືອນ. ບາງຄົນກໍອອກໄປຫຼິ້ນນຳໝູ່ຢູ່ເຮືອນ ຫຼື ຕາມສວນສາທາລະນະໃກ້ເຮືອນ.
2) ຮູບທີ 4: ກິດຈະກຳການຮຽນລອຍນໍ້າ; ນັກຮຽນຜູ້ທີ່ມັກໃນການລອຍນໍ້າ ຫຼັງຈາກເລີກຮຽນຈະໄປຮຽນລອຍນໍ້າໃນສະຖານທີ່ຕ່າງໆ ເຊັ່ນ: ສະໂມສອນລອຍນໍ້າ ຫຼື ບ່ອນເປີດຝຶກລອຍນໍ້າຂອງເມືອງທີ່ອາໄສຢູ່. ການຝຶກລອຍນໍ້າ ຈະມີຄູສອນສະເພາະ ແລະ ມີການຄຸ້ມຄອງຄວາມປອດໄພເປັນຢ່າງດີ.
3) ຮູບທີ 5: ຮຽນເພີ່ມ; ນັກຮຽນສ່ວນຫຼາຍຈະເຂົ້າຮຽນເພີ່ມ ເພື່ອກຽມສອບເສັງເຂົ້າຮຽນຕໍ່ໂຮງຮຽນທີ່ມີຊື່ສຽງ; ບ່ອນຮຽນເພີ່ມສ່ວນຫຼາຍແມ່ນໂຮງຮຽນເອກະຊົນທີ່ສອນເພີ່ມໂດຍສະເພາະ ແລະ ວິຊາທີ່ນັກ ຮຽນຍີ່ປຸ່ນຮຽນເພີ່ມຫຼາຍແມ່ນ ວິຊາຄະນິດສາດ, ພາສາຍີ່ປຸ່ນ, ສັງຄົມ, ພາສາອັງກິດ ແລະ ວິຊາອື່ນທີ່ເປັນວິຊາຫຼັກ. ຮູບສຸດທ້າຍ ແມ່ນການຮຽນດ້ວຍຕົນເອງ. ພາຍຫຼັງເລີກຮຽນ ແລະ ພັກຜ່ອນແລ້ວເຂົາເຈົ້າກໍຈະເຮັດວຽກບ້ານ ແລະ ທວນຄືນບົດຮຽນດ້ວຍຕົນເອງ ຊຶ່ງມີປຶ້ມບົດຝຶກຫັດຕ່າງໆທີ່ສາມາດຮຽນດ້ວຍຕົນເອງໄດ້.
   - ນັກຮຽນລາວເຮົາມັກກິດຈະກຳຂອງນັກຮຽນຍີ່ປຸ່ນແນວໃດແດ່? ຍ້ອນຫຍັງ?



だい１７か　がいしゅつ　(ການອອກໄປຂ້າງນອກ)



ຄັ້ງທີ 1




**ໜ້າປົກ**

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າກ່ຽວກັບການອອກໄປຂ້າງນອກໄດ້ ເຊັ່ນ: ໄປໃສ, ໄປແນວໃດ? ແລະ ໄປກັບໃຜ?

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບເນື້ອໃນບົດຮຽນດ້ວຍການເບິ່ງຮູບໃນໜ້າປົກ; ຈິນຕະນາການເຖິງສະຖານະການ ແລະ ສິ່ງທີ່ຈະໄດ້ຮຽນໃນບົດນີ້.

- ການອອກໄປຂ້າງນອກ ຫຼື ໄປຫຼິ້ນ ສ່ວນຫຼາຍໄປໃສ? ໄປແນວໃດ? ແລະ ໄປນໍາໃຜ?

2) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do.

   1. ສາມາດຖາມ-ຕອບວ່າໄປໃສ
   2. ສາມາດຖາມ-ຕອບວ່າໄປແນວໃດ
   3. ສາມາດຖາມ-ຕອບວ່າໄປນໍາໃຜ

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ການອອກໄປຂ້າງນອກໝາຍເຖິງການໄປຫຼິ້ນ ຫຼື ໄປທ່ຽວໃນມື້ພັກຢູ່ສະຖານທີ່ໃດໜຶ່ງ.




1. ໄປຕະຫຼາດ

ききましょう **"ສະຖານທີ່ຕ່າງໆ"**

❖ **ຄາດໝາຍ**:

ໃຫ້ນັກຮຽນຝຶກເວົ້າສະຖານທີ່ຕ່າງໆທີ່ຈະໄປໃນວັນພັກ.

❖ **ຂັ້ນຕອນການສອນ**

1) ຄູພານັກຮຽນສົນທະນາກ່ຽວກັບຮູບຂອງສະຖານທີ່ຕ່າງໆ.
2) ໃຫ້ນັກຮຽນເບິ່ງຮູບແລ້ວຖາມກ່ຽວກັບຄວາມໝາຍຂອງຄຳສັບ.
3) ຟັງ CD ພ້ອມທັງເບິ່ງຮູບສະຖານທີ່ຕ່າງໆ.
4) ຟັງ CD ແລະ ຖາມກ່ຽວກັບສຽງ ຫຼື ຄຳສັບທີ່ໄດ້ຍິນ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄຳສັບໃຫ້ນັກຮຽນຝຶກເວົ້າຄຳສັບ.
7) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄຳສັບດ້ວຍພາສາລາວ.
8) ຝຶກຫັດ: ນັກຮຽນ-ນັກຮຽນ
   - ນັກຮຽນຝຶກຫັດເປັນຄູ່: A ເວົ້າເປັນພາສາລາວ, B ເວົ້າເປັນພາສາຍີ່ປຸ່ນ.

     ຕົວຢ່າງ: A: "ເຮືອນໝູ່", "ຕະຫຼາດກາງຄືນ"...

     B: ともだちの　うち、ナイトマーケット...
   - ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄຳສັບທີ່ເປັນຊື່ສະຖານທີ່ ຂຽນດ້ວຍຕົວອັກສອນຄະຕະຄະນະ ແມ່ນຄຳສັບທີ່ຢືມມາຈາກພາສາຕ່າງປະເທດໃຫ້ອອກສຽງຕາມແຕ່ລະຕົວອັກສອນ ເຊັ່ນ: レストラン、ナイトマーケット

## はなしましょう **"ສະຖານທີ່ທີ່ມັກໄປ"**

❖ **ຄາດໝາຍ**: ໃຫ້ນັກຮຽນສາມາດເວົ້າສະຖານທີ່ທີ່ມັກໄປເປັນພາສາຍີ່ປຸ່ນໄດ້.

❖ **ຂັ້ນຕອນການສອນ**

1) ນັກຮຽນຂຽນ 3 ບ່ອນທີ່ມັກໄປໃນວັນພັກ.

   1. （いちば　）
   2. （デパート）
   3. （ともだちの　うち　）

2) ຄູເຮັດບົດຕົວຢ່າງໃຫ້ນັກຮຽນເບິ່ງ; ຫຼັງຈາກນັ້ນ, ໃຫ້ນັກຮຽນຝຶກສົນທະນາເປັນຄູ່.

ຕົວຢ່າງ: いちばへ　いきます。

デパートへ　いきます。

ともだちの　うちへ　いきます。

3) ນັກຮຽນຝຶກເວົ້າເປັນຄູ່; ຫຼັງຈາກນັ້ນ, ໃຫ້ 2-3 ຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

かいわ 48

ケオさん、どようび、どこへ　いきますか。
Keo-san, do-yoobi, doko e ikimasu ka.

ナイトマーケットへ　いきます。ななさんは？
Naito-maaketto e ikimasu. Nana-san wa?

えいがかんへ　いきます。
Eegakan e ikimasu.

いいですね。
Ii desu ne.

はなしましょう
(1) ວັນພັກທ້າຍອາທິດ ເຈົ້າຊິໄປໃສ?
(2) ຖາມໝູ່ 3 ຄົນ.

| | | どこ doko |
|---|---|---|
| (1) | わたし watashi | |
| (2) | さん san | |
| | さん san | |
| | さん san | |

## かいわ **"ການຖາມ-ຕອບວ່າ ໄປໃສ"**

❖ **ຄາດໝາຍ**

ໃຫ້ນັກຮຽນຮູ້ວິທີຖາມ-ຕອບວ່າ ໄປໃສ.

❖ **ຂັ້ນຕອນການສອນ**

ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບຫຍັງ?

ຮູບທີ່ທ້າວ ແກ້ວ ເວົ້າເຖິງແມ່ນສະຖານທີ່ໃດ?

1) ນັກຮຽນສັງເກດຈາກຮູບພາບ ແລະ ຕອບຕາມຄວາມຄິດ.
2) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
3) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ ເຊັ່ນ: ທ້າວ ແກ້ວ ຈະໄປໃສ? ນາງ ນະນະ ຈະໄປໃສ? ໄປວັນຫຍັງ?
4) ຟັງ CD ແລ້ວຝຶກອອກສຽງ.
5) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
6) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

## はなしましょう **"ຖາມໝູ່ວ່າຈະໄປໃສໃນວັນພັກທ້າຍອາທິດ"**

❖ **ຄາດໝາຍ**: ໃຫ້ນັກຮຽນຝຶກຖາມ-ຕອບວ່າຈະໄປໃສໃນວັນພັກທ້າຍອາທິດ?

1) ຂຽນສະຖານທີ່ທີ່ຈະໄປຂອງຕົນເອງ.

ຕົວຢ່າງ: わたしは　にちようび　ともだちの　うちへ　いきます。

2) ໃຫ້ແຕ່ລະຄົນຖາມໝູ່ໃຫ້ໄດ້ 3 ຄົນແລ້ວຂຽນໃສ່ຕາຕະລາງ.

ຕົວຢ່າງ: A : ～さん、どようび、どこへ　いきますか。

B: おてらへ　いきます。

| | どこ doko |
|---|---|
| わたし watashi | ともだちの　うち |
| B さん san | おてら |

3) ໃຫ້ນັກຮຽນລຸກຂຶ້ນເວົ້າເປັນຄູ່ໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ ラ**

1) ທວນຄືນຕົວອັກສອນຄະຕະຄະນະ, ອ່ານຕົວອັກສອນແຖວ マ、ヤ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວ ラ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ ラ.

❖ **ຟັງ CD ແລະ ຂຽນຕົວອັກສອນທີ່ໄດ້ຍິນ**

1）__リ__ 2）__ラ__ 3）__レ__ 4）__ル__ 5）__ロ__

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຖາມວ່າ “ເຈົ້າຊິໄປໃສ? ພາສາຍີ່ປຸ່ນວ່າແນວໃດ? ”.
- ທວນຄືນຄຳສັບກ່ຽວກັບສະຖານທີ່ດ້ວຍການຍົກຮູບ ແລ້ວໃຫ້ນັກຮຽນເວົ້າພາສາຍີ່ປຸ່ນ.
- ວຽກບ້ານ: ໃຫ້ນັກຮຽນຊອກຂໍ້ມູນກ່ຽວກັບການຄົມມະນາຄົມຢູ່ໃນນະຄອນຫຼວງວຽງຈັນ ຫຼື ແຂວງອື່ນໆ ມີພາຫະນະຫຍັງແດ່?

✿❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀✿

ຄັ້ງທີ 2

## ききましょう “ໄປດ້ວຍຫຍັງ?”

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າຊື່ພາຫະນະທີ່ໃຊ້.

❖ **ຂັ້ນຕອນການສອນ**

1) ທວນຄືນຄໍາສັບກ່ຽວກັບສະຖານທີ່ຕ່າງໆ ເປັນພາສາຍີ່ປຸ່ນ.
2) ສົນທະນາກ່ຽວກັບຮູບວ່າແຕ່ລະຮູບແມ່ນພາຫະນະຫຍັງແດ່? ເບິ່ງຮູບ a - i ມີຮູບຫຍັງແດ່?
3) ຟັງ CD ແລ້ວຝຶກອອກສຽງ.
4) ໃຊ້ຮູບປະກອບໃຫ້ນັກຮຽນຝຶກອອກສຽງດ້ວຍການຍົກແຕ່ລະຮູບ ແລ້ວໃຫ້ນັກຮຽນອອກສຽງຄໍາສັບຂອງແຕ່ລະຮູບນັ້ນ.
5) ຊີ້ໃສ່ຮູບພາບ ແລ້ວໃຫ້ນັກຮຽນເວົ້າແຕ່ລະຄົນ ຫຼື ເວົ້າເປັນແຖວ, ເວົ້າເປັນກຸ່ມ.
6) ນັກຮຽນຝຶກເປັນຄູ່: A ເວົ້າເປັນພາສາລາວ, B ເວົ້າເປັນພາສາຍີ່ປຸ່ນ.

ຕົວຢ່າງ: A: “ລົດຕຸກຕຸກ”, “ລົດຈັກ”...

B: トゥクトゥク、バイク...

- ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ໃຫ້ເອົາໃຈໃສ່ການອອກສຽງຄໍາສັບທີ່ເປັນຄະຕະຄະນະ トゥクトゥク、バイク... ແມ່ນໃຫ້ເວົ້າຕາມຕົວອັກສອນ.

## はなしましょう ຖາມໝູ່ “ໄປດ້ວຍຫຍັງ?”

❖ **ຄາດໝາຍ**: ໃຫ້ນັກຮຽນຮູ້ເວົ້າວ່າ ໄປດ້ວຍຫຍັງ?

1) ເຈົ້າໄປເຮືອນໝູ່ດ້ວຍຫຍັງ?

ຕົວຢ່າງ: じてんしゃ で ともだちの うちへ いきます。

2) ນັກຮຽນຝຶກເວົ້າເປັນຄູ່; ຫຼັງຈາກນັ້ນ, ໃຫ້ 2-3 ຄູ່ ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໄປດ້ວຍພາຫະນະຕ່າງໆແມ່ນມີຄຳຊ່ວຍ で ແຕ່ຖ້າຍ່າງໄປແມ່ນあるいて ບໍ່ມີ で

ຕົວຢ່າງ: <u>あるいて</u> ともだちの うちへ いきます。

きいてかきましょう **"ພັກແລ້ງໄປໃສ?ໄປແນວໃດ?ໄປກັບໃຜ?"**

1) ຟັງ CD ກ່ຽວກັບຄຳຖາມໃນການໄປພັກແລ້ງ ຊຶ່ງໃນນັ້ນຈະມີປະໂຫຍກຄຳຖາມ ເຊັ່ນ: ໄປໃສ? どこへ, ໄປແນວໃດ? どうやって, ໄປກັບໃຜ? だれと. ພະຍາຍາມ ຊອກຄຳຕອບຈາກການຟັງ CD ແລ້ວຂຽນໃສ່ຕາຕະລາງ.
2) ໃຫ້ນັກຮຽນສັງເກດຄຳຕອບຕົວເລືອກວ່າ ມີສະຖານທີ່ໃດແດ່? ໄປດ້ວຍຫຍັງ? ໄປກັບໃຜ?

ຄຳຕອບໃນ CD

1. ミンさん、なつやすみ、どこへ　いきますか。
   ルアンパバーンへ　いきます。
   へえ、いいですね。どうやって　いきますか。
   バスで　いきます。
   だれと　いきますか。
   かぞくと いきます。
2. ナパーさん、なつやすみ、どこへ　いきますか。
   タイへ かえります。
   そうですか。どうやって　かえりますか。
   ひこうきで　かえります。
   だれと　かえりますか。
   ひとりで　かえります。
   えっ、すごいですね。
3. ノイさん、なつやすみ、どこへ　いきますか。
   おじいさんの　うちへ　いきます。
   おじいさんの　うちは　どこですか。
   サワンナケートです。
   どうやって　いきますか。
   おとうさんと　くるまで　いきます。
   そうですか。

| | どこへ doko e | どうやって dooyatte | だれと dare to |
|---|---|---|---|
| 1 | k. ルアンパバーン | c. バス | n. かぞく |
| 2 | m. タイ | h. ひこうき | r. ひとりで |
| 3 | j. サワンナケート | b.くるま | o. おとうさん |

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ひとりで～ ມີຄວາມໝາຍວ່າ ...ຄົນດຽວ





かいわ 51

ケオさん、なつやすみ、どこへ いきますか。
Keo-san, natsu-yasumi, doko e ikimasu ka.

ルアンパバーンへ いきます。
Ruanpabaan e ikimasu.

そうですか。どうやって いきますか。
Soo desu ka. Dooyatte ikimasu ka.

くるまで いきます。
Kuruma de ikimasu.

だれと いきますか。
Dare to ikimasu ka.

かぞくと いきます。ななさんは？
Kazoku to ikimasu. Nana-san wa?

にほんへ かえります。
Nihon e kaerimasu.

へえ、いいですね。
Hee, ii desu ne.

はなしましょう

ຖາມໝູ່: ພັກແລ້ງຊິໄປໃສ? ໄປແນວໃດ ແລະ ໄປກັບໃຜ? ວັນພັກແລ້ງຂອງແຕ່ລະຄົນເປັນແນວໃດ?

64

## かいわ "ຖາມ-ຕອບກ່ຽວກັບການໄປທ່ຽວໃນໄລຍະພັກແລ້ງ"

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ວິທີຖາມ-ຕອບວ່າໄປໃສ? ໄປແນວໃດ?ໄປນຳໃຜ?

❖ **<u>ຂັ້ນຕອນການສອນ</u>**

ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ລົມກັນກ່ຽວກັບເລື່ອງຫຍັງ? ຮູບທີ່ ທ້າວ ແກ້ວເວົ້າເຖິງແມ່ນສະຖານທີ່ໃດ? ນາງ ນະນະ ເວົ້າຫຍັງ?

1) ນັກຮຽນສັງເກດຈາກການເບິ່ງຮູບພາບ ແລະ ຕອບຕາມຄວາມຄິດ.
2) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
3) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ ເຊັ່ນ: ທ້າວ ແກ້ວ ຈະໄປໃສ? ນາງ ນະນະ ຈະໄປໃສ? ໄປດ້ວຍຫຍັງ? ໄປນຳໃຜ?
4) ຟັງ CD ແລ້ວຝຶກອອກສຽງ.
5) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
6) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຄູຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈບົດສົນທະນາ ຫຼື ບໍ່? ເຊັ່ນ: ພັກແລ້ງ ທ້າວ ແກ້ວຈະໄປໃສ? ໄປດ້ວຍຫຍັງ? ໄປກັບໃຜ? ນາງນະນະເດ? ຖ້ານັກຮຽນສ່ວນຫຼາຍສາມາດຕອບໄດ້ ໝາຍຄວາມວ່ານັກຮຽນເຂົ້າໃຈເນື້ອໃນຂອງບົດສົນທະນາ.

はなしましょう **“ຖາມໝູ່ວ່າພັກແລ້ງຈະໄປໃສ? ໄປແນວໃດ? ໄປກັບໃຜ?”**

❖ <u>**ຄາດໝາຍ**</u>:

ໃຫ້ນັກຮຽນສາມາດຖາມກ່ຽວກັບແຜນການພັກແລ້ງວ່າ ຈະໄປໃສ? ໄປແນວໃດ? ໄປນຳໃຜ?

❖ <u>**ຂັ້ນຕອນການສອນ**</u>

1) ກ່ອນຈະຖາມໝູ່ ໃຫ້ຂຽນກ່ຽວກັບຕົນເອງກ່ອນ.

わたしは　なつやすみ、サワンナケートへ　いきます。

バスで　いきます。

かぞくと　いきます。

2) ຖາມໝູ່ໃຫ້ໄດ້ 3 ຄົນ ແລ້ວຂຽນຄຳຕອບ.

<u>ຕົວຢ່າງ</u>: 〜さん、なつやすみ、どこへ　いきますか。

どうやって　いきますか。だれと　いきますか。

❖ **ເຝິກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ແຖວ ワ.**

1) ທວນຄືນຕົວອັກສອນຄະຕະຄະນະ; ອ່ານຕົວອັກສອນແຖວ ラ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນ ຕາມບັດຕົວອັກສອນແຖວ ワ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ແຖວ ワ.

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຖາມວ່າ “ເຈົ້າຊິໄປແນວໃດ? ໄປດ້ວຍຫຍັງ?” ພາສາຍີ່ປຸ່ນວ່າແນວໃດ.
- ທວນຄືນຄຳສັບກ່ຽວກັບພາຫະນະດ້ວຍການຍົກຮູບ ແລ້ວໃຫ້ນັກຮຽນເວົ້າເປັນພາ ສາຍີ່ປຸ່ນ.
- **ວຽກບ້ານ**: ໃຫ້ນັກຮຽນກະກຽມແຜນໄປທ່ຽວໃນວັນພັກທ້າຍອາທິດວ່າຈະໄປໃສ? ໄປແນວໃດ? ໄປກັບໃຜ? ເພື່ອເຮັດກິດຈະກຳໃນຊົ່ວໂມງໜ້າ.



ຄັ້ງທີ 3

かつどう “ຈັດລຳດັບສິ່ງທີ່ເຮັດໃນວັນພັກທ້າຍອາທິດນີ້”

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າແຜນໃນມື້ວັນພັກທ້າຍອາທິດນີ້ໄດ້.

❖ **ທວນຄືນບົດຮຽນຜ່ານມາ**

ໃຫ້ທວນຄືນຫົວບົດ ແລະ ເນື້ອໃນຂອງບົດຮຽນນີ້, ທວນຄືນກ່ຽວກັບຄຳສັບ ແລະ ປະໂຫຍກການຖາມ-ຕອບວ່າ ຈະໄປໃສ? ໄປແນວໃດ? ໄປກັບໃຜ?.



❖ **ຂັ້ນຕອນການສອນ**

1) ຈັດແບ່ງກຸ່ມ ກຸ່ມລະ 3-4 ຄົນ ແລ້ວສົນທະນາກ່ຽວກັບວັນພັກທ້າຍອາທິດນີ້ວ່າ ຈະໄປໃສ? ໄປແນວໃດ? ໄປກັບໃຜ?

ຕົວຢ່າງ: わたしは　どようび、ルアンパバーンへ　いきます。
ひこうきで　いきます。
おとうさんと　いきます。

2) ຄູຢາຍເຈ້ຍໃຫ້ນັກຮຽນຂຽນລຳດັບຄຳຕອບທີ່ຖືກເລືອກຫຼາຍກວ່າໝູ່ ແຕ່ອັນດັບ 1-3.

ຕົວຢ່າງ:

| | |
|---|---|
| ルアンパバーン | 3にん |
| ひこうきで | ふたり |
| かぞく | 3にん |

3) ໃຫ້ແຕ່ລະກຸ່ມຂຶ້ນສັງລວມຄຳຕອບຂອງກຸ່ມ ແລ້ວສະເໜີເປັນແຜນລວມໃນວັນພັກທ້າຍອາທິດ ເຊັ່ນ: ພາຍໃນກຸ່ມມີໃຜຈະໄປໃສ? ໄປດ້ວຍຫຍັງ? ແລະ ໄປກັບໃຜ? ໃຫ້ຂຶ້ນເວົ້າເປັນກຸ່ມຢູ່ໜ້າກະດານ ເຊັ່ນ:

わたしたちの　グループについて　はっぴょうします。
A: どようび、　どこへ　いきますか。
ルアンパバーンへ　いきます。３にんです。
A: どうやっていきますか。
ひこうきで　いきます。ふたりです。
A: だれと　いきますか。
かぞくと　いきます。３にんです。
おわります。
ありがとうございました。

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູກະກຽມຄຳສັບທີ່ກ່ຽວກັບສະຖານທີ່ ແລະ ພາຫະນະທີ່ບໍ່ໄດ້ລະບຸໃນບົດຮຽນຕື່ມເພື່ອໃຫ້ນັກຮຽນສາມາດເວົ້າຄຳສັບນັ້ນໄດ້ ເຊັ່ນ: でんしゃ、ふね…

❖ **ທົບທວນຄືນບົດຮຽນ**

- ທວນຄືນຄຳສັບກ່ຽວກັບການຖາມວ່າ ຈະໄປໃສ? ໄປແນວໃດ? ໄປນຳໃຜ?
- ໃຫ້ນັກຮຽນຖາມໝູ່ວ່າ

にちようび、　どこへ　いきますか。

どうやって　いきますか。

だれと　いきますか。

**Can-Do Check**

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຍາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.



❀ ລະບົບຂົນສົ່ງຂອງຍີ່ປຸ່ນ ❀

✂ ຂ້າງລຸ່ມນີ້ແມ່ນຮູບລົດໄຟ ຊິນກັງເຊັງ; ຈາກໂຕກຽວໄປຫາໂອຊາກະ ປະມານ 400 ກິໂລແມັດ, ຖ້ານັ່ງລົດໄຟນີ້ ແຕ່ໂຕກຽວຫາໂອຊາກະ ຄິດວ່າຈະໃຊ້ເວລາເທົ່າໃດ?

✂ ວຽງຈັນຫາຫຼວງພະບາງ, ວຽງຈັນຫາປາກເຊ ປະມານຈັກກິໂລແມັດ? ເດີນທາງດ້ວຍລົດເມ ແລະ ຍົນໃຊ້ເວລາເທົ່າໃດ? ຖ້ານັ່ງລົດໄຟຊິນກັງເຊັງ ຄິດວ່າຈະໃຊ້ເວລາເທົ່າໃດ?

✂ ຄິດວ່າ ນີ້ແມ່ນຮູບຫຍັງ?

68

**<u>ຄໍລໍາ</u>** **❀ ລະບົບຂົນສົ່ງຂອງຍີ່ປຸ່ນ ❀**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນໄດ້ຮູ້ກ່ຽວກັບລະບົບຂົນສົ່ງໃນປະເທດລາວ ແລະ ຍີ່ປຸ່ນ.

❖ **<u>ຂັ້ນຕອນການສອນ</u>**

ກ່ອນເຂົ້າໄປເບິ່ງບົດຄວາມໃນຄໍລໍາ ໃຫ້ນັກຮຽນສົນ ທະນາກ່ຽວກັບຮູບວ່າ ແມ່ນຫຍັງແດ່? ມີຮູບໃດທີ່ເຄີຍເຫັນບໍ່? ລົດໄຟນີ້ມີຈຸດພິເສດແນວໃດ?

ກ່ອນເຂົ້າຄໍລໍາໃໝ່ ຄູສົນທະນານໍານັກຮຽນກ່ຽວກັບການຄົມມະນາຄົມຢູ່ລາວ "ຢູ່ບ້ານເຮົາມີລົດຫຍັງແດ່? ນັກຮຽນເຄີຍຂີ່ລົດໂດຍສານບໍ່? ເປັນແນວໃດ?". ນັກຮຽນເວົ້າກ່ຽວກັບປະສົບການຂອງຕົນເອງ.

- ຄູໃຫ້ນັກຮຽນເບິ່ງຮູບແລ້ວສົນທະນາກັນ. "ຈົ່ງເບິ່ງຮູບລົດໄຟໃນປຶ້ມແບບຮຽນ; ມີໃຜເຄີຍເຫັນບໍ່? ເປັນຫຍັງຫົວລົດໄຟຈຶ່ງເປັນຮູບແຫຼມໆແນວນັ້ນ?". ນັກຮຽນຕອບຕາມຄວາມເຂົ້າໃຈ.





- ຮູບນີ້ແມ່ນຮູບລົດໄຟຊິນກັງເຊັງ. ຈາກໂຕກຽວໄປຫາໂອຊາກະ ປະມານ 400 ກິໂລແມັດ; ຖ້ານັ່ງລົດໄຟນີ້ ແຕ່ໂຕກຽວຫາໂອຊາກະ ຄິດວ່າຈະໃຊ້ເວລາເທົ່າໃດ?
- ລົດໄຟຊິນກັງເຊັງຂອງປະເທດຍີ່ປຸ່ນແມ່ນລົດໄຟຄວາມໄວສູງ; ໃຊ້ແລ່ນແຕ່ເໜືອຫາໃຕ້. ລົດໄຟນີ້ຖືກອອກແບບໃຫ້ມີຫົວລັກສະນະແຫຼມ ເພື່ອລົດຜ່ອນແຮງຕ້ານຂອງລົມໃນຂະນະທີ່ແລ່ນດ້ວຍຄວາມໄວ. ລົດໄຟຊິນກັງເຊັງຈະແລ່ນດ້ວຍຄວາມໄວປະມານ 270-285 ກິໂລຕໍ່ຊົ່ວໂມງ. ສະນັ້ນ, ຈາກໂຕກຽວໄປຫາໂອຊາກະ ປະມານ400 ກິໂລແມັດ ຈະໃຊ້ເວລາປະມານ 2 ຊົ່ວໂມງ 25 ນາທີ.

- ຄູຖາມນັກຮຽນວ່າ ວຽງຈັນຫາຫຼວງພະບາງ, ວຽງຈັນຫາປາກເຊ ປະມານຈັກກິໂລແມັດ? ເດີນທາງດ້ວຍລົດເມ ແລະ ຍົນໃຊ້ເວລາເທົ່າໃດ? ຖ້ານັ່ງລົດໄຟຊິນກັງເຊັງ ຄິດວ່າຈະໃຊ້ເວລາເທົ່າໃດ?
- ແຕ່ວຽງຈັນຫາຫຼວງພະບາງມີໄລຍະທາງປະມານ 390 ກິໂລແມັດ; ຖ້າຂີ່ລົດເມກໍຈະໃຊ້ເວລາປະມານ 6-8 ຊົ່ວໂມງ ແຕ່ຖ້າຂີ່ລົດໄຟຊິນກັງເຊັງ ຈະໃຊ້ເວລາພຽງແຕ່ 2 ຊົ່ວໂມງປາຍເທົ່ານັ້ນ. ຖ້າຂີ່ຍົນກໍຈະໃຊ້ເວລາປະມານ 45 ນາທີ.
- ແຕ່ວຽງຈັນຫາປາກເຊ ໄລຍະທາງປະມານ 675 ກິໂລ ແມັດ; ຖ້າຂີ່ລົດເມກໍຈະໃຊ້ເວລາປະມານ 10-12 ຊົ່ວໂມງ ແຕ່ຖ້າຂີ່ລົດໄຟຊິນກັງເຊັງ ຈະໃຊ້ເວລາພຽງແຕ່ 3 ຊົ່ວໂມງປາຍ. ຖ້າຂີ່ຍົນກໍຈະໃຊ້ເວລາປະມານ 1 ຊົ່ວໂມງ 15 ນາທີ.

ຮູບຕໍ່ໄປ ຄິດວ່າແມ່ນຮູບຫຍັງ?





- ຮູບນີ້ແມ່ນຕູ້ຂາຍປີ້ລົດໄຟອັດຕະໂນມັດ. ຜູ້ໂດຍສານສາມາດຊື້ດ້ວຍເງິນເປັນຫຼຽນ, ທະນະບັດ ຫຼືເປັນບັດທີ່ມີເຊັນເຊີ; ສາມາດຕື່ມເງິນໄດ້. ໃນຕູ້ດັ່ງກ່າວຈະມີຊື່ສະຖານນີພ້ອມກັບລາຄາ. ສະນັ້ນ , ຜູ້ ໂດຍສານຈະກົດປຸ່ມສະຖານນີທີ່ຈະໄປ ແລ້ວປ່ອນເງິນເຂົ້າຕູ້ດັ່ງກ່າວ ປີ້ລົດໄຟກໍຈະອອກມາພ້ອມດ້ວຍເງິນທອນ.
- ຫຼັງຈາກໄດ້ປີ້ແລ້ວ ກໍໄປຜ່ານປະຕູອ່ານປີ້ອັດຕະໂນມັດ ໂດຍປ່ອນປີ້ເຂົ້າໄປປ່ອງທີ່ມີລູກສອນ; ປີ້ຈະເຂົ້າໄປໃນເຄື່ອງເພື່ອກວດສອບ; ຫຼັງຈາກນັ້ນ, ປີ້ຈະອອກມາຄືນໃຫ້ຜູ້ໂດຍສານເກັບມ້ຽນໄວ້ ປ່ອນອອກປະຕູສະຖານນີປາຍທາງ. ເມື່ອໄປຮອດສະຖານນີປາຍທາງ ປະຕູອັດຕະໂນມັດກໍຈະເກັບປີ້ໄວ້ເລີຍ.
- ຖ້າຄູ ແລະ NP ສາມາດນໍາເອົາຮູບ ຫຼື ວິດີໂອທີ່ກ່ຽວຂ້ອງກັບການຂຶ້ນລົດໄຟຢູ່ຍີ່ປຸ່ນ, ນັກຮຽນກໍຈະເຂົ້າໃຈວິທີການຂຶ້ນລົດໄຟງ່າຍຂຶ້ນ.



## だい18か　かいもの (ການຊື້ເຄື່ອງ)



ຄັ້ງທີ 1


だい18か

ບົດທີ 18

かいもの

Kaimono

ການຊື້ເຄື່ອງ

Can-Do

ເປົ້າໝາຍການຮຽນ:

ສາມາດຖາມ-ຕອບກ່ຽວກັບລາຄາສິນຄ້າໄດ້

69

**ໜ້າປົກ**

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າລາຄາສິນຄ້າ ແລະ ຖາມລາຄາເປັນພາສາຍີ່ປຸ່ນ.

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບເນື້ອໃນບົດຮຽນດ້ວຍການເບິ່ງຮູບໃນໜ້າປົກແລ້ວຈິນຕະນາການເຖິງສະຖານະການ ແລະ ສິ່ງທີ່ຈະໄດ້ຮຽນໃນບົດນີ້.

- ຮູບນີ້ສື່ເຖິງຫຍັງ? ລາວກຳລັງເຮັດຫຍັງ?
- ເວລາຊື້ເຄື່ອງໄປຊື້ຢູ່ໃສ? ໄດ້ຖາມລາຄາແນວໃດ?

2) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do ສາມາດຖາມ-ຕອບກ່ຽວກັບລາຄາສິນຄ້າໄດ້

**ຂໍ້ຄວນເອົາໃຈໃສ່ສຳລັບຄູສອນ**

- ຄູທວນຄືນການນັບເລກ 1-10, 10-100 ໃຫ້ນັກຮຽນໄດ້ຝຶກການເວົ້າຕົວເລກຄືນ.

**1.** ລາຄາເທົ່າໃດ?

**ききましょう** 53

❖すうじ ຕົວເລກ 100-1,000, 000

| | | | | | |
|---|---|---|---|---|---|
| 100 | ひゃく hyaku | 1,000 | せん sen | 10,000 | いちまん ichi-man |
| 200 | にひゃく ni-hyaku | 2,000 | にせん ni-sen | 100,000 | じゅうまん juu-man |
| 300 | さんびゃく san-byaku | 3,000 | さんぜん san-zen | 1,000,000 | ひゃくまん hyaku-man |
| 400 | よんひゃく yon-hyaku | 4,000 | よんせん yon-sen | | |
| 500 | ごひゃく go-hyaku | 5,000 | ごせん go-sen | | |
| 600 | ろっぴゃく rop-pyaku | 6,000 | ろくせん roku-sen | | |
| 700 | ななひゃく nana-hyaku | 7,000 | ななせん nana-sen | | |
| 800 | はっぴゃく hap-pyaku | 8,000 | はっせん has-sen | | |
| 900 | きゅうひゃく kyuu-hyaku | 9,000 | きゅうせん kyuu-sen | | |

**はなしましょう** ຝຶກອ່ານຕົວເລກກັບໝູ່.

① 240 ② 350 ③ 698 ④ 1,800 ⑤ 3,100
⑥ 15,000 ⑦ 20,000 ⑧ 78,000 ⑨ 140,000

ຟັງ ແລະ ຂຽນ ຕົວເລກ. 54

① ______ ② ______ ③ ______ ④ ______

70

## 1. ລາຄາເທົ່າໃດ?

ききましょう **"ຕົວເລກ 100-1,000,000"**

❖ **ຄາດໝາຍ**:

ໃຫ້ນັກຮຽນຝຶກເວົ້າຕົວເລກຫົວໜ່ວຍ100-1,000,000.

❖ **ຂັ້ນຕອນການສອນ**

ທວນຄືນການນັບເລກ 1-10 ແລະ 10-100 ເພື່ອໃຫ້ນັກຮຽນທວນຄືນການເວົ້າຕົວເລກທີ່ໄດ້ຮຽນມາ.

1) ຄູພານັກຮຽນສົນທະນາກ່ຽວກັບການເວົ້າຕົວເລກໃນພາສາຍີ່ປຸ່ນ.

2) ຟັງ CD ໂດຍບໍ່ເບິ່ງປຶ້ມ.

3) ຟັງ CD; ຄູຖາມກ່ຽວກັບສຽງ ຫຼື ຄໍາສັບຕົວເລກທີ່ໄດ້ຍິນ.

   ❖ ຫຼັກ 100 ພາສາຍີ່ປຸ່ນວ່າແນວໃດ? 1 ພັນ, 1 ໝື່ນ, 1ແສນ ແລະ 1 ລ້ານເດ?

4) ຟັງ CD ແລ້ວຝຶກເວົ້າອອກສຽງ.

5) ໃຊ້ບັດຮູບຄໍາສັບຕົວເລກໃຫ້ນັກຮຽນຝຶກເວົ້າຄໍາສັບ

6) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄໍາສັບຕົວເລກດ້ວຍພາສາລາວ.

   ❖ ຫຼັກຮ້ອຍ ～ひゃく、ຫຼັກພັນ ～せん、ຫຼັກໝື່ນ ～まん、
   ຫຼັກແສນ ～じゅうまん、ຫຼັກລ້ານ ひゃくまん

7) ຝຶກຫັດ: ນັກຮຽນ-ນັກຮຽນ
   - ນັກຮຽນຝຶກຫັດເປັນຄູ່: A ເວົ້າເປັນພາສາລາວ, B ເວົ້າເປັນພາສາຍີ່ປຸ່ນ.
     ຕົວຢ່າງ: A: "ໜຶ່ງແສນ", "ສາມໝື່ນ",...
     B: じゅうまん、さんまん...
   - ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- 1,000 ພາສາຍີ່ປຸ່ນວ່າ "せん" ບໍ່ເວົ້າ "いちせん".
- 10,000 ແມ່ນ "いちまん" ບໍ່ເວົ້າ "じゅっせん" .
- ນັກຮຽນລາວມັກຫຼົງ:
  10,000 ເປັນ "じゅっせん" ຫຼື "じゅうまん".
  100,000 ເປັນ "ひゃくせん" ຫຼື "ひゃくまん".
- "ひゃくまん" ແມ່ນ 1,000,000 ບໍ່ແມ່ນ 100,000.



はなしましょう **"ຝຶກອ່ານຕົວເລກ"**

❖ **ຄາດໝາຍ**: ໃຫ້ນັກຮຽນສາມາດເວົ້າຕົວເລກໃຫຍ່ໃນພາສາຍີ່ປຸ່ນໄດ້.

❖ **ຂັ້ນຕອນການສອນ**

1) ໃຫ້ນັກຮຽນເວົ້າຕົວເລກເປັນພາສາຍີ່ປຸ່ນ.


はなしましょう **ຝຶກອ່ານຕົວເລກກັບໝູ່**

① 240 ② 350 ③ 698 ④ 1,800 ⑤ 3,100
⑥ 15,000 ⑦ 20,000 ⑧ 78,000 ⑨ 140,000

2) ນັກຮຽນຝຶກເວົ້າເປັນຄູ່ ຫຼັງຈາກນັ້ນ, ໃຫ້ແຕ່ລະຄູ່ ເວົ້າໃຫ້ໝູ່ໃນຫ້ອງຟັງ.

ຄໍາຕອບ:

| | |
|---|---|
| ① にひゃく　よんじゅう | ② さんびゃく　ごじゅう |
| ③ ろっぴゃく　きゅうじゅうはち | ④ せん　はっぴゃく |
| ⑤ さんぜん　ひゃく | ⑥ いちまん　ごせん |
| ⑦ にまん | ⑧ ななまん　はっせん |
| ⑨ じゅうよんまん | |

3) ຟັງ ແລະ ຂຽນເປັນຕົວເລກ

①1,300　②5,500　③18,000　④200,000




## ききましょう “ສິ່ງຂອງຕ່າງໆ”

❖ **ຄາດໝາຍ**

ໃຫ້ນັກຮຽນຮູ້ຄໍາສັບກ່ຽວກັບສິ່ງຂອງຕ່າງໆ.

❖ **ຂັ້ນຕອນການສອນ**

1) ຖາມກ່ຽວກັບຮູບສິ່ງຂອງຕ່າງໆວ່າມີຫຍັງແດ່?
2) ຟັງ CD ແລ້ວຝຶກອອກສຽງ.
3) ໃຊ້ຮູບປະກອບ ໂດຍໃຫ້ນັກຮຽນຝຶກອອກສຽງດ້ວຍການ ຍົກແຕ່ລະຮູບແລ້ວໃຫ້ອອກສຽງຄໍາສັບຂອງແຕ່ລະຮູບ.
4) ຊີ້ໃສ່ຮູບພາບ ແລ້ວໃຫ້ນັກຮຽນເວົ້າແຕ່ລະຄົນ ຫຼື ເວົ້າເປັນແຖວ, ເວົ້າເປັນກຸ່ມ.
5) ນັກຮຽນຝຶກເປັນຄູ່: A ເວົ້າເປັນພາສາລາວ, B ເວົ້າເປັນພາສາຍີ່ປຸ່ນ.

   ຕົວຢ່າງ:　A:　“ປຶ້ມຂຽນ”, “ພວງກະແຈ”...

   B:　ノート、キーホルダー...

6) ບອກສິ່ງຂອງທີ່ໝູ່ຊີ້ ເປັນພາສາຍີ່ປຸ່ນ (ຄູຊີ້ໃສ່ສິ່ງຂອງໃຫ້ນັກຮຽນເວົ້າເປັນຕົວຢ່າງ) ຫຼັງຈາກນັ້ນ, ໃຫ້ນັກຮຽນຝຶກເວົ້າເປັນຄູ່.
7) ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

ໃຫ້ເອົາໃຈໃສ່ການອອກສຽງຄໍາສັບທີ່ມີສຽງຍາວノート、キーホルダー...

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ ທີ່ມີສຽງ「ッ」ສຽງຍາວ「ー」**

1) ທວນຄືນຕົວອັກສອນຄະຕະຄະນະ; ອ່ານຕົວອັກສອນແຖວ ラ、ワ.
2) ຄູອະທິບາຍຕົວອັກສອນທີ່ມີສຽງ「ッ」ແລະ ສຽງຍາວ「ー」ຈະອອກສຽງເປັນ 1 ຈັງຫວະສຽງ ເຊັ່ນ:

| ● | ● | ● |
|---|---|---|
| ベ | ッ | ド |

| ● | ● | ● |
|---|---|---|
| バ | ッ | グ |

| ● | ● | ● | ● |
|---|---|---|---|
| ポ | ケ | ッ | ト |

beddo ຕຽງ　　baggu ກະເປົາ　　poketto ຖົງ (ເສື້ອ, ໂສ້ງ)

3) ຄູອະທິບາຍຕົວອັກສອນທີ່ມີສຽງຍາວ「ー」ຈະອອກສຽງຍາວລວມເປັນ 1 ຈັງຫວະສຽງ. ເວລາຂຽນທາງຕັ້ງຈະຂຽນໄວ້ກາງ ບໍ່ອຽງໄປຊ້າຍ ຫຼື ຂວາ ເຊັ່ນ:

| ⬬ | | ● |
|---|---|---|
| ノ | ー | ト |

| ● | ⬬ | | ● |
|---|---|---|---|
| デ | パ | ー | ト |

| |
|---|
| ノ |
| ｜ |
| ト |

nooto ປຶ້ມຂຽນ　　depaato ຮ້ານສັບພະສິນຄ້າ

4) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
5) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນແຖວທີ່ມີສຽງ「ッ」, ສຽງຍາວ「ー」.
6) ຄູ/NP ນໍາພານັກຮຽນອ່ານຕົວອັກສອນເປັນຄໍາສັບ (ຄູຍົກຮູບໃຫ້ເບິ່ງ).
7) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
8) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ ຄໍາສັບທີ່ມີ「ッ」ແລະ ສຽງຍາວ「ー」.



☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຄູໃຊ້ບັດຕົວເລກໃຫ້ນັກຮຽນທວນຄືນການເວົ້າຕົວເລກຈໍານວນຫຼາຍ ເປັນພາສາຍີ່ປຸ່ນ.
- ໃຫ້ນັກຮຽນທວນຄືນຕົວເລກເປັນຄູ່ດ້ວຍການຂຽນຕົວເລກ ແລ້ວໃຫ້ອີກຝ່າຍໜຶ່ງເວົ້າເປັນພາ ສາຍີ່ປຸ່ນ.
- **ວຽກບ້ານ**: ໃຫ້ນັກຮຽນຊອກຂໍ້ມູນກ່ຽວກັບລາຄາສິນຄ້າ ຫຼື ເຂົ້າໜົມທີ່ຕົນເອງມັກກິນເພື່ອຝຶກເວົ້າລາຄາໃນຊົ່ວໂມງຕໍ່ໄປ.



ຄັ້ງທີ 2

## ききましょう “ລາຄາເທົ່າໃດ?”

ຟັງສຽງໃນ CD; ສິ່ງຂອງແຕ່ລະອັນລາຄາເທົ່າໃດ? 56

( ドル) ( キープ) ( キープ)

( キープ) ( キープ) ( えん)

❖ **ຄາດໝາຍ**

ໃຫ້ນັກຮຽນຟັງລາຄາສິນຄ້າ ແລະ ຂຽນຕົວເລກໄດ້.

❖ **ຂັ້ນຕອນການສອນ**

1) ທວນຄືນການເວົ້າຕົວເລກຈຳນວນຫຼາຍ ແລະ ສິ່ງຂອງຕ່າງໆເປັນພາສາຍີ່ປຸ່ນ.
2) ສົນທະນາກ່ຽວກັບຮູບວ່າແຕ່ລະຮູບແມ່ນຮູບຫຍັງແດ່?ພາສາຍີ່ປຸ່ນເວົ້າແນວໃດ?
3) ສະກຸນເງິນ ມີສະກຸນໃດແດ່? ドル、キープ、えん.
4) ຟັງ CD ແລ້ວເວົ້າກ່ຽວກັບຕົວເລກ.
5) ຟັງ CD ແລ້ວຂຽນຕົວເລກລາຄາສິນຄ້າ.
6) ກວດຄືນຄຳຕອບນຳໝູ່ທີ່ນັ່ງຢູ່ທາງຂ້າງ.
7) ຟັງ CD ເພື່ອສົມທຽບຄຳຕອບນຳໝູ່ໃນຫ້ອງ.

**ຄຳຕອບ**

ຟັງສຽງໃນ CD ວ່າສິ່ງຂອງແຕ່ລະອັນລາຄາເທົ່າໃດ? 56

( 30 ドル) (3,500,000 キープ) ( 40,000 キープ)

( 170,000 キープ) ( 68,000 キープ) ( 200 えん)

ຄຳຕອບໃນ CD

1．それ、にほんのノートですね。
はい。
いくらですか。
200 えんです。

2．このＴシャツ、いろがきれいですね。
ありがとう。
いくらですか。
4 まんキープです。

3．そのけいたいでんわ、あたらしいですね。
はい。
いくらですか。
350 まんキープです。
えっ、たかいですね！

4．そのとけい、かっこいいですね。
ありがとう。
いくらですか。
30 ドルです。
へえ、わたしもほしいです。

5．そのキーホルダー、かわいい！
ありがとう。
いくらですか。
68,000 キープです。
へえ、いいですね。

6．このかばん、おおきいですね。
はい。
いくらですか。
17 まんキープです。
そうですか。



**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

・ເນື້ອໃນ CD ຈະບໍ່ໄປຕາມລຳດັບຮູບ. ສະນັ້ນ, ໃຫ້ນັກຮຽນຟັງຄຳສັບສິນຄ້າໃຫ້ໄດ້ ແລ້ວຈຶ່ງຟັງລາຄາສິນຄ້າຕາມລຳດັບ. ຄູເຮັດຂໍ້ໜຶ່ງເປັນຕົວຢ່າງໃຫ້ນັກຮຽນໄດ້ຮູ້ວິທີການຟັງ ແລ້ວຂຽນລາຄາ.

❖ ການຖາມລາຄາໃນພາສາຍີ່ປຸ່ນ ແມ່ນ “いくらですか。” ຖ້າຕ້ອງການຖາມວ່າ “ອັນນີ້ເທົ່າໃດ?” ແມ່ນໃຊ້ປະໂຫຍກ “これ、いくらですか。”

- ຖ້າເປັນປະໂຫຍກເຈາະຈົງເຖິງສິ່ງຂອງໃດໜຶ່ງແມ່ນຈະໃຊ້ຮູບ: “このかばん、 いくらですか。”

| | | |
|---|---|---|
| これ kore | この＋N kono | ～ນີ້ |
| それ sore | その＋N sono | ～ນັ້ນ |
| あれ are | あの＋N ano | ～ພຸ້ນ |

- N ໝາຍເຖິງ “ຄຳນາມ”

<u>ຕົວຢ່າງ</u>: これ、いくらですか。 (ອັນນີ້ ລາຄາເທົ່າໃດ?)

このくつ、いくらですか。(ເກີບຄູ່ນີ້ ລາຄາເທົ່າໃດ?)

❖ ໃຫ້ນັກຮຽນຝຶກເປັນຄູ່ໂດຍການນຳໃຊ້ຮູບພາບທີ່ມີຢູ່ໃນປຶ້ມ ແລະ ລາຄາທີ່ກຳນົດເອງ. ປ່ຽນຜຽນກັນຖາມ-ຕອບ.


かいわ 57

わあ、このキーホルダー、かわいいですね。
Waa, kono kiihorudaa, kawaii desu ne.
いくらですか。
Ikura desu ka.
これですか。80,000キープです
Kore desu ka. Hachi-man kiipu desu.
えっ、たかいですね。
Et, takai desu ne.
あのキーホルダーは いくらですか。
Ano kiihorudaa wa ikura desu ka.
20,000キープです。
Ni-man kiipu desu.
やすいですね。じゃ、あれに します。
Yasui desu ne. Ja, are ni shimasu.

❖ ～に します ～ ni shimasu ເອົາ...
ຕົວຢ່າງ: これに します。Kore ni shimasu.

はなしましょう
ສົມມຸດໄປຕະຫຼາດກັບໝູ່. ເລືອກສິ່ງທີ່ຢາກໄດ້ 3 ຢ່າງ ແລ້ວຂຽນໃສ່ຕາຕະລາງລຸ່ມນີ້.
(ຊື້ຫຍັງ? ລາຄາເທົ່າໃດ? ກຳນົດເອງ)

| | | |
|---|---|---|
| | | |
| キープ | キープ | キープ |

73

## かいわ **“ຖາມ-ຕອບລາຄາສິນຄ້າ”**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ວິທີຖາມ-ຕອບລາຄາສິນຄ້າ ແລະ ສະແດງຄຳຄິດເຫັນຕໍ່ລາຄາສິນຄ້າ.

❖ **<u>ຂັ້ນຕອນການສອນ</u>**

ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະ ນາ ເຊັ່ນ: ຮູບນີ້ເວົ້າກ່ຽວກັບເລື່ອງຫຍັງ? ນາງ ນະນະ ແລະ ນາງ ນ້ອຍ ລົມຫຍັງກັນ?

1) ນັກຮຽນສັງເກດຈາກການເບິ່ງຮູບພາບ ແລະ ຕອບຕາມຄວາມຄິດ.
2) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
3) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ ເຊັ່ນ: ໄດ້ຍິນສິນຄ້າຫຍັງແດ່? ລາຄາເທົ່າໃດ? ສຸດທ້າຍ ນາງ ນະນະ ຊື້ສິນຄ້າລາຄາເທົ່າໃດ?
4) ຟັງ CD ແລ້ວທຳຄວາມເຂົ້າໃຈກ່ຽວກັບບົດສົນທະນາ.

5) ເປີດປຶ້ມ ແລະ ຟັງ CD ພ້ອມທັງຝຶກເວົ້າອອກສຽງ.
6) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
7) ຄູອະທິບາຍ じゃ、あれにします。ດ້ວຍການຍົກຕົວຢ່າງການນຳໃຊ້. ໃຫ້ນັກຮຽນສັງເກດຄຳຕອບ ແລະ ຄວາມໝາຍຂອງສຳນວນດັ່ງກ່າວ. ເຊັ່ນ: ຖາມລາຄາສໍຂອງນັກຮຽນ 2 ຄົນ ແລ້ວເລືອກເອົາລາຄາທີ່ຖືກສຸດ ພ້ອມທັງເວົ້າວ່າ: じゃ、あれにします。(ເອົາອັນນັ້ນພຸ້ນ).
8) ນັກຮຽນຝຶກເວົ້າບົດສົນທະນາເປັນຄູ່; ຫຼັງຈາກນັ້ນ, ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈບົດສົນທະນາ ຫຼື ບໍ່? ເຊັ່ນ: ນາງ ນະນະ ຊື້ພວງກະແຈລາຄາເທົ່າໃດ?



## はなしましょう **"ຖາມລາຄາ ແລ້ວສະແດງຄຳຄິດເຫັນກ່ຽວກັບລາຄາ"**

❖ **<u>ຄາດໝາຍ</u>**: ໃຫ້ນັກຮຽນສາມາດຖາມລາຄາສິນຄ້າ ແລ້ວສະແດງຄຳຄິດເຫັນຕໍ່ກັບລາຄານັ້ນ.

❖ **<u>ຂັ້ນຕອນການສອນ</u>**

1) ເລືອກສິ່ງທີ່ຢາກໄດ້ 3 ຢ່າງ.
2) ນັກຮຽນຝຶກຖາມ-ຕອບນຳໝູ່ໃນຫ້ອງ.
<u>ຕົວຢ່າງ</u>:

| | | |
|---|---|---|
| | | |
| 200,000キープ | キープ | キープ |

A: 〜さん、このＴシャツ、いくらですか。
B: 200,000　キープです。
A: えっ、たかい／いい／やすいですね。
(ຄຳສະແດງຄວາມຮູ້ສຶກ)

❖ **ຝຶກອ່ານ ແລະ ຂຽນຕົວພະຍັນຊະນະສຽງຄວບ ○ャ、○ュ、○ョ**

1) ທວນຄືນຕົວອັກສອນຄະຕະຄະນະ; ອ່ານຕົວອັກສອນທີ່ມີສຽງ「ッ」ສຽງຍາວ「ー」.
2) ຄູອະທິບາຍຕົວອັກສອນທີ່ມີພະຍັນຊະນະສຽງຄວບ ○ャ、○ュ、○ョ.

| | | |
|---|---|---|
| キャ | キュ | キョ |
| kya | kyu | kyo |
| シャ | シュ | ショ |
| sha | shu | sho |
| チャ | チュ | チョ |
| cha | chu | cho |
| ニャ | ニュ | ニョ |
| nya | nyu | nyo |
| ヒャ | ヒュ | ヒョ |
| hya | hyu | hyo |
| ミャ | ミュ | ミョ |
| mya | myu | myo |
| リャ | リュ | リョ |
| rya | ryu | ryo |

| | | |
|---|---|---|
| ギャ | ギュ | ギョ |
| gya | gyu | gyo |
| ジャ | ジュ | ジョ |
| ja | ju | jo |
| | | |
| | | |
| | | |
| | | |
| ビャ | ビュ | ビョ |
| bya | byu | byo |
| | | |
| | | |
| ピャ | ピュ | ピョ |
| pya | pyu | pyo |

3) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
4) ນັກຮຽນຝຶກອ່ານຕົວອັກສອນຕາມບັດພະຍັນຊະນະສຽງຄວບ ○ャ、○ュ、○ョ.
5) ຄູ/NP ນໍາພານັກຮຽນອ່ານຕົວອັກສອນເປັນຄໍາສັບ (ຄູຍົກຮູບໃຫ້ເບິ່ງ).
6) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
7) ຝຶກຂຽນຕົວອັກສອນໃນປຶ້ມຂຽນພະຍັນຊະນະສຽງຄວບ ○ャ、○ュ、○ョ .

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຖາມວ່າ "ບິກນີ້ລາຄາເທົ່າໃດ? ພາສາຍີ່ປຸ່ນວ່າແນວໃດ?
- ທວນຄືນການຖາມ-ຕອບລາຄາສິນຄ້າຕ່າງໆນໍາໝູ່ທີ່ນັ່ງທາງຂ້າງເປັນພາສາຍີ່ປຸ່ນ ພ້ອມທັງສະແດງຄໍາຄິດເຫັນດ້ວຍການໃຊ້ຄໍາຄຸນນາມ.
- ວຽກບ້ານ: ໃຫ້ນັກຮຽນກະກຽມລາຄາສິນຄ້າຕ່າງໆຂອງ 4 ປະເທດ. ໃຫ້ເລືອກສິນຄ້າປະມານ 3 ຢ່າງ (ສິນຄ້າທີ່ບໍ່ມີລາຄາແຕກຕ່າງກັນຫຼາຍ) ເພື່ອມາຝຶກເວົ້າໃນຊົ່ວໂມງກິດຈະກໍາ.



ຄັ້ງທີ 3

## かつどう "ປຽບທຽບລາຄາສິນຄ້າ"

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດປຽບທຽບລາຄາສິນຄ້າຂອງແຕ່ລະປະເທດ.

❖ **ທວນຄືນບົດຮຽນຜ່ານມາ**

ໃຫ້ນັກຮຽນທວນຄືນຫົວບົດ ແລະ ເນື້ອໃນຂອງບົດຮຽນ ນີ້, ທວນຄືນຄຳສັບ ແລະ ປະໂຫຍກ ຖາມ-ຕອບ ກ່ຽວກັບລາຄາສິນຄ້າ.

❖ **ຂັ້ນຕອນການສອນ**

1) ຈັດແບ່ງກຸ່ມ ກຸ່ມລະ 3-4 ຄົນ ແລ້ວສົນທະນາກ່ຽວກັບລາຄາສິນຄ້າຂອງ 4 ປະເທດທີ່ໄດ້ຮຽນມາ.

2) ຫຼັງຈາກນັ້ນ, ຢາຍເຈ້ຍໃຫ້ແຕ່ລະກຸ່ມ; ເລືອກເອົາ 3 ຕົວຢ່າງສິນຄ້າມານຳສະເໜີໃຫ້ໝູ່ໃນຫ້ອງຟັງ.

ກຸ່ມ 1: わたしたちの　グループについて　はっぴょうします。

ラオスの　みずは　3,000キープです。

にほんの　みずは　120えんです。(ປະມານ 8,580 ກີບ)

ベトナムの　みずは　4,000ドンです。

タイの　みずは　10 バーツです。

ຕົວຢ່າງ: みず 500ml

| ラオス | にほん | ベトナム | タイ |
|---|---|---|---|
| 3,000キープ | 120えん | 4,000 ドン | 10 バーツ |

3) ຫຼັງຈາກນຳສະເໜີໃນຊົ່ວໂມງກິດຈະກຳແລ້ວ ໃຫ້ເອົາເຈ້ຍໄປຕິດໄວ້ຝາຫ້ອງຕາມເຂດທີ່ຄູກຳນົດ.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ຄູ/NP ຊອກຂໍ້ມູນລາຄາສິນຄ້າ ເພື່ອກຸ່ມທີ່ບໍ່ໄດ້ກຽມມາ ພ້ອມທັງເບິ່ງອັດຕາແລກປ່ຽນເງິນຕາຂອງອາທິດນັ້ນໄວ້ ໃນກໍລະນີທີ່ນັກຮຽນຕ້ອງການຮູ້ຕົວເລກການແລກປ່ຽນເງິນຕາ.

❖ **ທົບທວນຄືນບົດຮຽນ**

ຖາມກ່ຽວກັບລາຄາສິນຄ້າ 2 ຢ່າງ ນໍາໝູ່.

A: このリボン、いくらですか。　B: 30,000 キープです。

A: そのかばん、いくらですか。　B: 230,000 キープです。

## Can-Do Check

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.



❀ ເງິນຍີ່ປຸ່ນ ❀

ເງິນຍີ່ປຸ່ນກັບເງິນລາວມີອັນໃດຄືກັນ ແລະ ອັນໃດຕ່າງກັນ?

ເງິນຍີ່ປຸ່ນມີ 2 ປະເພດຄື: ທະນະບັດ ແລະ ຫຼຽນ.
ທະນະບັດ ມີ 4 ໃບຄື: ໃບ 1,000 ເຢນ, 2,000 ເຢນ, 5,000 ເຢນ ແລະ 10,000 ເຢນ.
ຫຼຽນມີ 6 ຫຼຽນຄື: ຫຼຽນ 1 ເຢນ, 5 ເຢນ, 10 ເຢນ, 50 ເຢນ, 100 ເຢນ ແລະ 500 ເຢນ.
ຖ້າເປັນເງິນລາວ(ກີບ)ມີໃບຫຍັງແດ່?

ຂ້າງລຸ່ມນີ້ແມ່ນຕາຕະລາງອັດຕາແລກປ່ຽນເງິນໃນເດືອນສິງຫາ ປີ 2018. ເບິ່ງອັດຕາແລກປ່ຽນຂອງປະເທດຕໍ່ໄປນີ້; ເວລາແລກເປັນເງິນລາວຈະໄດ້ເທົ່າໃດ?

にほん nihon 100yen (　　Kip)
アメリカ amerika 1dollar (　　Kip)
タイ tai 100baht (　　Kip)
EU 1euro (　　Kip)
ちゅうごく chuugoku 1yuan (　　Kip)

76

**ຄໍາລໍາ ❀ ເງິນຍີ່ປຸ່ນ ❀**

❖ **ຄາດໝາຍ**

ໃຫ້ນັກຮຽນໄດ້ຮຽນຮູ້ກ່ຽວກັບເງິນຍີ່ປຸ່ນ.

❖ **ຂັ້ນຕອນການສອນ**

- ຄໍາລໍານີ້ຈະໄດ້ຮຽນຮູ້ກ່ຽວກັບ “ເງິນຍີ່ປຸ່ນ”. ກ່ອນເຂົ້າເນື້ອໃນ ຄູສົນທະນາກ່ຽວກັບ “ເງິນລາວ” ໂດຍຕັ້ງຄໍາຖາມໃຫ້ນັກຮຽນຕອບຕາມຄວາມເຂົ້າໃຈ.
- ເງິນລາວມີຈັກປະເພດ? ມີເງິນເປັນຫຼຽນບໍ່? ໃບໃດທີ່ມີມູນຄ່າສູງສຸດ ຫຼື ນ້ອຍສຸດ?



- ເງິນຍີ່ປຸ່ນມີ 2 ປະເພດຄື: ທະນະບັດ ແລະ ຫຼຽນ.
  ທະນະບັດ ມີ 4 ໃບຄື: ໃບ 1000 ເຢນ, ໃບ 2000 ເຢນ (ເປັນທະນະບັດພິເສດ, ບໍ່ຄ່ອຍໄດ້ນໍາໃຊ້ທົ່ວໄປ), 5000 ເຢນ ແລະ 10 000 ເຢນ. ປະເພດຫຼຽນມີ 6 ຫຼຽນຄື: ຫຼຽນ 1 ເຢນ, 5 ເຢນ, 10 ເຢນ, 50 ເຢນ, 100 ເຢນ ແລະ 500 ເຢນ. ຫຼຽນ 5 ເຢນ ແລະ 50 ເຢນ ຈະມີຮູຢູ່ກາງຫຼຽນ ເພື່ອໃຫ້ຈໍາແນກໄດ້ງ່າຍຂຶ້ນ.
- ຈຸດດີຂອງເງິນຫຼຽນແມ່ນຫຍັງ? (ມີ ແລະ ບໍ່ມີ ຕ່າງກັນແນວໃດ?)



⌘ ຂ້າງລຸ່ມນີ້ແມ່ນຕາຕະລາງອັດຕາແລກປ່ຽນເງິນໃນເດືອນສິງຫາ ປີ 2018. ເບິ່ງອັດຕາແລກປ່ຽນຂອງປະເທດຕໍ່ໄປນີ້; ເວລາແລກເປັນເງິນລາວຈະໄດ້ເທົ່າໃດ?

| | | |
|---|---|---|
| にほん nihon | 100yen（ | Kip） |
| アメリカ amerika | 1dollar （ | Kip） |
| タイ tai | 100baht（ | Kip） |
| EU | 1euro（ | Kip） |
| ちゅうごく chuugoku | 1yuan（ | Kip） |

ອັດຕາແລກປ່ຽນ
EXCHANGE RATES

| ສະກຸນເງິນ CURRENCY | ອັດຕາຊື້ BUYING RATES | ອັດຕາຂາຍ SELLING RATES |
|---|---|---|
| USD | 8,433 | 8,459 |
| THB | 261.09 | 262.67 |
| EUR | 9,558 | 9,606 |
| GBP | 10,615 | 10,827 |
| AUD | 5,923 | 6,041 |
| CAD | 6,042 | 6,163 |
| CHF | 7,944 | 8,103 |
| CNY | 1,214 | 1,238 |
| SGD | 5,558 | 5,669 |
| JPY | 72.74 | 74.19 |
| VND | 0.366 | 0.374 |
| MYR | 1,879 | 1,917 |
| KRW | 6.23 | 6.35 |
| HKD | 978 | 998 |

- ສົນທະນາກ່ຽວກັບສະກຸນເງິນປະເທດຕ່າງໆທີ່ນັກຮຽນຮູ້ຈັກວ່າມີສະກຸນເງິນຫຍັງແດ່?



## だい１９か　しゅうまつ１　(ທ້າຍອາທິດ 1)



ຄັ້ງທີ 1




**ໜ້າປົກ**

❖ **ຄາດໝາຍ**

ໃຫ້ນັກຮຽນຮູ້ການເວົ້າເຖິງກິດຈະກຳທີ່ຕົນເອງເຮັດໃນທ້າຍອາທິດເປັນພາສາຍີ່ປຸ່ນໄດ້.

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບຫົວບົດ ແລະ ເນື້ອໃນໂດຍການເບິ່ງຮູບຢູ່ໜ້າປົກ.
2) ສົນທະນາກ່ຽວກັບກິດຈະກຳໃນທ້າຍອາທິດ ເຊັ່ນ: ມັກເຮັດຫຍັງ? ຢູ່ໃສ?
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do .
   1. ສາມາດຖາມ-ຕອບ ສິ່ງທີ່ຕົນເອງເຮັດໃນທ້າຍອາທິດວ່າ ເຮັດຫຍັງ? ຢູ່ໃສ?
   2. ສາມາດຊັກຊວນໝູ່ເຮັດກິດຈະກຳຕ່າງໆໃນທ້າຍອາທິດໄດ້

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ສົນທະນາກ່ຽວກັບກິດຈະກຳໃນທ້າຍອາທິດທີ່ນັກຮຽນລາວມັກເຮັດ ແລະ ສະຖານທີ່ທີ່ມັກໄປ. ຖ້າບໍ່ມີໃນປຶ້ມຮຽນ ໃຫ້ຈົດບັນທຶກໄວ້ເພື່ອຖາມພາສາຍີ່ປຸ່ນນຳ NP.




1. **ຊື້ເຄື່ອງຢູ່ຕະຫຼາດ**

ききましょう **"ເຮັດຫຍັງຢູ່ໃສ?"**

❖ **ຄາດໝາຍ**: ໃຫ້ນັກຮຽນຟັງ ແລະ ເລືອກກິດຈະກຳ ແລະ ບອກສະຖານທີ່ທີ່ເຮັດໄດ້.

❖ **ຂັ້ນຕອນການສອນ**

1) ຄູພານັກຮຽນສົນທະນາກ່ຽວກັບຮູບໃນປຶ້ມຮຽນ.
2) ທົບທວນຄືນກ່ຽວກັບຄຳສັບກິດຈະກຳ ແລະ ສະຖານທີ່.
3) ຟັງ CD ພ້ອມທັງເບິ່ງຮູບ.

4) ຟັງ CD ບໍ່ໃຫ້ນັກຮຽນຂຽນຄຳຕອບເທື່ອ

5) ທົບທວນຄວາມເຂົ້າໃຈຂອງນັກຮຽນ ດ້ວຍການເຮັດຕົວຢ່າງນຳກັນ 1 ຂໍ້ ເຊັ່ນ:

<u>ຕົວຢ່າງ</u>: えいがを　みます。　えいがかんで　えいがを　みます。


( b )


( d )


( e )


( a )


( c )


( f )

| ຄຳຕອບໃນ CD |
|---|
| えいがを みます、えいがかんで　えいがを みます。<br>ごはんを　たべます、レストランで　ごはんを たべます。<br>スポーツを　します、こうていで　スポーツを　します。<br>ゲームを　します、わたしのうちで　ゲームを　します。<br>かいものを　します、いちばで　かいものを　します。<br>ジュースを　のみます、やたいで　ジュースを　のみます。 |

6) ຟັງ CD ແລ້ວຂຽນຄຳຕອບ.

7) ສົມທຽບຄຳຕອບນຳໝູ່ທີ່ນັ່ງຢູ່ທາງຂ້າງ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຂັ້ນຕອນການຟັງແມ່ນເລີ່ມຟັງກິດຈະກຳວ່າ ເຮັດຫຍັງ, ຫຼັງຈາກນັ້ນຈຶ່ງແມ່ນສະຖານທີ່ຢູ່ໃສ, ຈະໃຊ້ຄຳຊ່ວຍ で ໃນປະໂຫຍກບອກສະຖານທີ່.
- やたい　ແມ່ນ ຮ້ານຂາຍເຄື່ອງແຄມທາງ.

## はなしましょう “ມັກກິດຈະກຳຫຍັງ? ຢູ່ໃສ?”

❖ **ຄາດໝາຍ**: ໃຫ້ນັກຮຽນຝຶກເວົ້າກິດຈະກຳທີ່ມັກ ແລະ ສະຖານທີ່ທີ່ມັກໄປໃນທ້າຍອາທິດ.

1) ຂຽນກິດຈະກຳທີ່ຕົນເອງມັກ 2 ກິດຈະກຳ ພ້ອມບອກສະຖານທີ່.

① ກິດຈະກຳ: （ ゲーム ）, ສະຖານທີ່: （ともだちの うち）

② ກິດຈະກຳ: （かいもの）, ສະຖານທີ່: （ビエンチャンセンター）

ຕົວຢ່າງ: わたしは ともだちの うちで ゲームを します。

わたしは ビエンチャンセンターで かいものを します。

2) ບອກໃຫ້ໝູ່ຮູ້ກິດຈະກຳຂອງຕົນເອງ ພ້ອມທັງຟັງໝູ່ເວົ້າກ່ຽວກັບກິດຈະກຳຂອງໝູ່.
3) ຖ້າຫາກຄຳຕອບຄືກັນໝາຍຄວາມວ່າໄປນຳກັນໄດ້. ຖ້າຄຳຕອບຕ່າງກັນກໍໄປຊອກຖາມໝູ່ຜູ້ທີ່ມີຄຳຕອບຄືກັນ.
4) ໃຫ້ນັກຮຽນປະມານ 2-3 ຄູ່ ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູກະກຽມຄຳສັບສຳລັບກິດຈະກຳ ຫຼື ສະຖານທີ່ທີ່ບໍ່ມີຢູ່ໃນບົດຮຽນໄວ້ໃຫ້ນັກຮຽນໄດ້ຝຶກເວົ້າ ເຊັ່ນ: あそびます ຫຼິ້ນ...



## かいわ “ວັນພັກທ້າຍອາທິດເຮັດຫຍັງ? ຢູ່ໃສ?”

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດຖາມ-ຕອບວ່າ ວັນພັກທ້າຍອາທິດເຮັດຫຍັງ? ຢູ່ໃສ?

❖ **ຂັ້ນຕອນການສອນ**

1) ທວນຄືນການເວົ້າ “ກິດຈະກຳ” ແລະ “ສະຖານທີ່”

- ໃຫ້ທວນຄືນບົດຮຽນຜ່ານມາໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
- ທວນຄືນການເວົ້າເປັນປະໂຫຍກເຊັ່ນ:
がっこうで スポーツを します。

2) ສົນທະນາກ່ຽວກັບຮູບ ແລະ ສະຖານະການຂອງບົດສົນທະນາ.
3) ໃຫ້ນັກຮຽນຟັງ CD ດ້ວຍຄໍາສັບທີ່ໄດ້ຍິນ ແລະ ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ.
4) ຄູສອບຖາມກ່ຽວກັບສຽງ ຫຼື ຄໍາສັບທີ່ໄດ້ຍິນ ແລະ ຄວາມໝາຍໃນບົດສົນທະນາ. ທ້າວ ແກ້ວ ເຮັດຫຍັງ? ຢູ່ໃສ? ນາງ ນະນະ ເດ? ເຂົາເຈົ້າລົມກັນກ່ຽວກັບກິດຈະກໍາໃນວັນຫຍັງ?
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ຄູ ເປັນຕົວລະຄອນໃນບົດສົນທະນາ; ຝຶກເວົ້າບົດສົນທະນາຕົວຢ່າງ. ຫຼັງຈາກນັ້ນ, ນັກຮຽນຝຶກ ສົນ ທະນາເປັນຄູ່.

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ໃຫ້ນັກຮຽນຖາມ-ຕອບກ່ຽວກັບກິດຈະກໍາວັນພັກທ້າຍອາທິດ ດ້ວຍການຕັ້ງຄໍາຖາມ ຕົວຢ່າງ: ～ようび、なにを　しますか。

## はなしましょう **"ວັນພັກເຈົ້າເຮັດຫຍັງ? ຢູ່ໃສ?"**

❖ **ຄາດໝາຍ:** ນັກຮຽນສາມາດຖາມ-ຕອບກ່ຽວກັບກິດຈະກໍາ ແລະ ສະຖານທີ່ທີ່ໄປໃນທ້າຍອາທິດ.

❖ **ຂັ້ນຕອນການສອນ**

1) ກ່ອນຈະຖາມໝູ່ ເຮັດຫຍັງ? ຢູ່ໃສ?

2) ຖາມໝູ່ໃຫ້ໄດ້ 3 ຄົນ ແລ້ວຂຽນໃສ່ຕາຕະລາງ.

ຕົວຢ່າງ: A: ～さん、どようび、なにを　しますか。

B: がっこうで　スポーツを　します。

| | なに nani | どこ doko |
|---|---|---|
| わたし watashi | しゅくだい | ともだちの うち |
| Bさん san | スポーツ | がっこう |

3) ໃຫ້ນັກຮຽນ 2-3 ຄູ່ ຂຶ້ນນໍາສະເໜີໃຫ້ໝູ່ຟັງ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນຖາມໝູ່ໃນຫ້ອງເປັນພາສາຍີ່ປຸ່ນ ～さん、どようび、なにを　しますか。
- ຕອບເປັນພາສາຍີ່ປຸ່ນ がっこうで　スポーツを　します。ຖ້າຂຽນກິດຈະກຳ ແລະ ສະຖານທີ່ຕ່າງໆເປັນຕົວອັກສອນຍີ່ປຸ່ນບໍ່ໄດ້ກໍໃຫ້ຂຽນພາສາລາວ ແລ້ວນຳສະເໜີເປັນພາສາຍີ່ປຸ່ນ.

**❖ ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ; ສຽງພາສາຕ່າງປະເທດ**

ຕົວອັກສອນຄະຕະຄະນະ ນຳໃຊ້ຂຽນຄຳຢືມທີ່ມາຈາກພາສາຕ່າງປະເທດ; ສະນັ້ນ, ເພື່ອໃຫ້ໃກ້ຄຽງກັບສຽງພາສາຕ່າງປະເທດ ຈຶ່ງມີຄວາມຈຳເປັນຕ້ອງໄດ້ໃຊ້ຕົວອັກສອນພິເສດ. ສຳລັບສຽງພາສາຕ່າງປະເທດທີ່ຕົວອັກສອນຄະຕະຄະນະບໍ່ສາມາດອອກສຽງໃຫ້ຄື ສ່ວນຫຼາຍຈະຂຽນດ້ວຍຕົວໃຫຍ່ ແລະ ນ້ອຍປະສົມເຂົ້າກັນ.

1) ທວນຄືນຕົວອັກສອນຄະຕະຄະນະ, ພະຍັນຊະນະຄວບ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມຕາຕະລາງຕົວອັກສອນ ສຽງພາສາຕ່າງປະເທດ.
4) ຄູ/NP ນຳພານັກຮຽນອ່ານຕົວອັກສອນເປັນຄຳສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນຕົວອັກສອນສຽງພາສາຕ່າງປະເທດ (ໜ້າທີ 121).

**❖ ສະຫຼຸບບົດຮຽນ, ວຽກບ້ານ**

- ເວລາຖາມວ່າ "ວັນອາທິດເຈົ້າເຮັດຫຍັງ? ພາສາຍີ່ປຸ່ນວ່າແນວໃດ? ".
- ນັກຮຽນຕອບ: ເຮັດກິດຈະກຳໃດໜຶ່ງ ຢູ່ສະຖານທີ່ໃດໜຶ່ງໃຫ້ໝູ່ທາງຂ້າງຟັງ.



ຄັ້ງທີ 2

### ききましょう “ເຮັດ (ກິດຈະກຳ) ນຳກັນບໍ່?”

❖ **ຄາດໝາຍ**:

ໃຫ້ນັກຮຽນຮູ້ ຊັກຊວນໝູ່ຄູ່ເຮັດກິດຈະກຳນຳກັນ.

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບຮູບວ່າມີກິດຈະກຳຫຍັງແດ່?
2) ຟັງ CD  ແລະ ຖາມກ່ຽວກັບຄຳສັບທີ່ໄດ້ຍິນ.
3) ຖາມນັກຮຽນກ່ຽວກັບເນື້ອໃນຂອງບົດທີ່ຟັງ; ເວົ້າກ່ຽວກັບຫຍັງ? ກິດຈະກຳຫຍັງແດ່? ຢູ່ໃສ? ເຂົາເຈົ້າຊວນກັນເຮັດຫຍັງແດ່? ລົງທ້າຍປະໂຫຍກເປັນແນວໃດ?
4) ຟັງ CD ເທື່ອລະຂໍ້ແລ້ວໝາຍເອົາຄຳຕອບທີ່ຖືກຕ້ອງ.

| 1 | 2 | 3 | 4 |
|---|---|---|---|
| b | e | c | a |

ຄຳຕອບໃນ CD

1. ケオさん、どようび いっしょに カオピヤックを たべませんか。

いいですね。たべましょう。どこで たべますか。

タラートサオで たべましょう。

2. ノイさん、どようび いっしょに かいものを しませんか。

はい、しましょう。どこで かいものを しますか。

ナイトマーケットへ いきましょう。

3. ミンさん、にちようび いっしょに バドミントンを しませんか。

いいですね、しましょう。どこで しますか。

スポーツセンターで しましょう。

はい、わかりました。

4. ナパーさん、にちようび いっしょに ゲームを しませんか。

ゲームですか？すみません、ゲームはちょっと・・・

ああ、そうですか。じゃ、えいがを みませんか。

いいですね。どこで みますか。

ビエンチャンセンターで みましょう。

はい、じゃ、またにちようび。

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນຟັງແລ້ວສັງເກດການລົງທ້າຍປະໂຫຍກ ເຊັ່ນ: ～しませんか。～しましょう。

はなしましょう
ຊວນໝູ່ເຮັດກິດຈະກຳ ໂດຍເລືອກ 2 ກິດຈະກຳຈາກຮູບຂ້າງເທິງແລ້ວຝຶກສົນທະນາ.
ຕົວຢ່າງ:
A：どようび、いっしょに　えいがを　みませんか。
Do-yoobi, isshoni eega o mimasen ka.
○ B：いいですね。みましょう
Ii desu ne. Mimashoo.
× B：すみません。えいがは　ちょっと…。
Sumimasen, eega wa chotto...
× B：すみません。どようびは　ちょっと…。
Sumimasen, do-yoobi wa chott...

## はなしましょう "ຊວນໝູ່ເຮັດກິດຈະກຳ"

❖ **<u>ຄາດໝາຍ</u>**

ນັກຮຽນສາມາດນຳໃຊ້ປະໂຫຍກຊັກຊວນໝູ່ເຮັດກິດຈະກຳນຳກັນ ແລະ ຕອບຕົກລົງ ຫຼື ບໍ່ຕົກລົງໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ຝຶກເວົ້າເປັນຄູ່ ເລືອກ 2 ກິດຈະກຳ ແລ້ວໃຊ້ປະໂຫຍກຊັກຊວນໝູ່ໃຫ້ເຮັດກິດຈະກຳນຳກັນ.
2) ຄູ ແລະ NP ເຮັດບົດສົນທະນາຕົວຢ່າງໃຫ້ເບິ່ງ.

<u>ຕົວຢ່າງ:</u>

A：　どようび、いっしょに　<u>えいがを　み</u>ませんか。
(ວັນເສົາ ໄປເບິ່ງໜັງນຳກັນບໍ່?)

B：　いいですね。<u>み</u>ましょう。
(ດີໄດ່ເນາະ, ໄປເບິ່ງກັນເທາະ)

3) ຄູອະທິບາຍ: ກໍລະນີຊັກຊວນໝູ່ຄູ່ເຮັດອັນໃດໜຶ່ງຮ່ວມກັນ ຈະໃຊ້ສຳນວນດັ່ງນີ້:

～ます　→　～ませんか。　**ປຸ່ງນຮູບ**

～ます　→　～ましょう。　**ປຸ່ງນຮູບ**

4) ປະໂຫຍກຕອບປະຕິເສດການຊັກຊວນ

すみません、<u>えいが</u>は　ちょっと…。

(ຂໍໂທດ, <u>ເບິ່ງໜັງ</u> ບໍ່ປານໃດ...)

すみません、<u>どようび</u>は　ちょっと…。

(ຂໍໂທດ, <u>ວັນເສົາ</u>ຄາວຽກໜ້ອຍໜຶ່ງ...)

5) ຫຼັງຈາກນັ້ນ, ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ຟັງ. ທັງກໍລະນີຕອບຮັບ ແລະ ກໍລະນີປະຕິເສດ.

**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ເວລາຕອບປະຕິເສດຈະຫຼີກລ່ຽງການປະຕິເສດທາງກົງເພື່ອຮັກສານ້ຳໃຈຂອງຜູ້ຊວນ. ຈະມັກໃຊ້ຄຳວ່າ すみません。～は ちょっと．．．ຂໍໂທດ, ໂດຍບໍ່ຈຳເປັນຕ້ອງເວົ້າເຫດຜົນລະອຽດ.


かいわ 62

ノイさん、にちようび、ひまですか。
Noi-san, nichi-yoobi, hima desu ka.
はい、ひまです。
Hai, hima desu.
じゃ、いっしょに　フォーを　たべませんか。
Ja, isshoni foo o tabemasen ka.
いいですね。たべましょう。
Ii desu ne. Tabemashoo.
どこで　たべますか。
Doko de tabemasu ka.
タラートサオで　たべましょう。
Taraato sao de tabemashoo.
はい、わかりました。じゃ、また　にちようび。
Hai, wakarimashita. Ja, mata nichi-yoobi.

はなしましょう
（1）ເລືອກ 3 ກິດຈະກຳ ທີ່ເຈົ້າຢາກເຮັດໃນທ້າຍອາທິດ.
（2）ຊວນໝູ່ເຮັດກິດຈະກຳ. ຖ້າກິດຈະກຳທີ່ທັນໃຫ້ຕອບຮັບ, ຖ້າບໍ່ທີ່ທັນໃຫ້ປະຕິເສດ.
（3）ອອກມາເວົ້າໃຫ້ໝູ່ຟັງ ເຮັດກິດຈະກຳຫຍັງ.
① (　　　)
② (　　　)
③ (　　　)

81

かいわ **"ຊັກຊວນໝູ່ເຮັດກິດຈະກຳໃນວັນພັກທ້າຍອາທິດ"**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຊັກຊວນໝູ່ເຮັດກິດຈະກຳນຳກັນພ້ອມທັງຮູ້ວິທີຕອບຮັບ ແລະ ຕອບປະຕິເສດໄດ້.

❖ **<u>ຂັ້ນຕອນການສອນ</u>**

1) ໃຫ້ທວນຄືນບົດຮຽນຜ່ານມາ ໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
ທວນຄືນການເວົ້າເປັນປະໂຫຍກເຊັ່ນ:
いっしょに　～をしませんか。

○　いいですね。～ましょう。

×　すみません。～(ກິດຈະກຳ) は　ちょっと。

×　すみません。～(ມື້, ວັນ) は　ちょっと。

2) ສົນທະນາກ່ຽວກັບຮູບ ແລະ ສະຖານະການຂອງບົດສົນທະນາ.
3) ໃຫ້ນັກຮຽນຟັງ CD ໂດຍຈັບເອົາຄຳສັບຫຼັກ ແລະ ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ.
4) ຄູຖາມກ່ຽວກັບສຽງ ຫຼື ຄຳສັບທີ່ໄດ້ຍິນ ແລະ ຄວາມໝາຍ ໃນບົດສົນທະນາ. ແມ່ນໃຜຊວນໃຜ? ເຮັດຫຍັງ? ຢູ່ໃສ? ຕອບຕົກລົງ ຫຼື ຕອບປະຕິເສດ? ເຂົາເຈົ້າລົມກັນກ່ຽວກັບກິດຈະກຳໃນວັນຫຍັງ?
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ຄູ ເປັນຕົວລະຄອນໃນບົດສົນທະນາ; ຝຶກເວົ້າບົດສົນທະນາຕົວຢ່າງ. ຫຼັງຈາກນັ້ນ, ນັກຮຽນຝຶກສົນ ທະນາເປັນຄູ່.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ນັກຮຽນຝຶກຖາມ-ຕອບ; ໃນກໍລະນີປະຕິເສດ ມີ 2 ກໍລະນີຄື: ປະຕິເສດ ເພາະບໍ່ສົນໃຈໃນກິດຈະກຳນັ້ນ ແລະ ປະຕິເສດເພາະຄາວຽກອື່ນ.

  ຕົວຢ່າງ: × すみません。ゲーム(ກິດຈະກຳ) は　ちょっと。

  × すみません。にちようび(ມື້,ວັນ)は　ちょっと。

はなしましょう "3 ກິດຈະກຳທີ່ຢາກເຮັດໃນທ້າຍອາທິດ"

❖ **ຄາດໝາຍ**:

ນັກຮຽນຊອກຫາໝູ່ທີ່ຈະເຮັດກິດຈະກຳໃນທ້າຍອາທິດຮ່ວມກັນ.

❖ **ຂັ້ນຕອນການສອນ**

1) ກ່ອນຈະຖາມໝູ່ ໃຫ້ເວົ້າກ່ຽວກັບຕົນເອງ. ເລືອກ 3 ກິດຈະກ□າທີ່ຕົນຢາກເຮັດໃນທ້າຍອາທິດ.

   ຂຽນ 3 ກິດຈະກຳທີ່ຕົນຢາກເຮັດໃນທ້າຍອາທິດ.

   ①　（　えいが　　）

   ②　（　かいもの　）

   ③　（　ゲーム　　）

2) ຖາມໝູ່ 2 ຄົນວ່າມີໃຜຄືກັນກັບກິດຈະກຳທີ່ເຈົ້າຂຽນບໍ່?
   - ຖ້າກິດຈະກຳຂອງໝູ່ຄືກັນກັບຂອງຕົນເອງແມ່ນໃຫ້ຕອບຮັບ.

   ຕົວຢ່າງ: A：～さん、どようび、いっしょに　えいがを　みませんか。

   B: いいですね。みましょう。

   - ຖ້າກິດຈະກຳຂອງໝູ່ບໍ່ຄືກັນກັບຂອງຕົນເອງແມ່ນໃຫ້ຕອບປະຕິເສດ.

   ຕົວຢ່າງ: A：～さん、どようび、いっしょに　かいものに　いきませんか。

   B: すみません。かいものは　ちょっと。

   すみません。どようびは　ちょっと。

3) ໃຫ້ນັກຮຽນ2-3 ຄູ່ຂຶ້ນເວົ້າໃຫ້ໝູ່ຟັງ ກໍລະນີຕອບຮັບ ແລະ ກໍລະນີຕອບປະຕິເສດ.

## よみましょう

❖ **ຄາດໝາຍ**: ໃຫ້ນັກຮຽນເບິ່ງໂປສະເຕີແລ້ວຮູ້ເນື້ອໃນກ່ຽວກັບແຕ່ລະກິດຈະກຳນັ້ນໄດ້.

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບໂປສະເຕີ a – c ມີຄວາມແຕກຕ່າງກັນແນວໃດ? ແມ່ນໂປສະເຕີຫຍັງ?
2) ແຕ່ລະບົດອ່ານມີເນື້ອໃນແນວໃດ? ໃຫ້ນັກຮຽນອ່ານບົດແລ້ວຂີດກ້ອງເອົາຄຳສັບຫຼັກທີ່ເປັນຄຳຕອບ (ໃຫ້ເວລາ 5 ນາທີ).
3) ຕັ້ງຄຳຖາມເພື່ອໃຫ້ຮູ້ວ່ານັກຮຽນເຂົ້າໃຈ ຫຼື ບໍ່? ເຊັ່ນ: ທ້າວ ຢູຕະ ເວົ້າກ່ຽວກັບກິດຈະກຳຫຍັງ? ນາງ ນະພາຊວນໄປໃສ? ທ້າວ ມິງ ເວົ້າກ່ຽວກັບຫຍັງ?
4) ຟັງ CD ແລະ ເບິ່ງປື້ມໄປນຳ.
5) ປຽບທຽບຄຳຕອບນຳໝູ່ທີ່ນັ່ງທາງຂ້າງ.



( c. )

えいがが すきですか。にちようびの ごご、がっこうで にほんの えいがを みましょう。
あたらしい えいがですよ。



( b. )

どようび、ビエンチャンセンターで ラオスの おんがくを ききませんか。でんとうてきな おんがくですよ。



( a. )

にちようび、いっしょに にほんの ちゅうがくせいと スポーツを しませんか。おもしろいですよ。

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ໃຫ້ນັກຮຽນສັງເກດບົດອ່ານ ແລະ ໂປສະເຕີ ດ້ວຍການຈັບຄໍາສັບຫຼັກ ແລະ ສາມາດເຂົ້າໃຈເນື້ອໃນບົດອ່ານນັ້ນໄດ້.

❖ **ທວນຄືນການອ່ານ ແລະ ຂຽນຕົວອັກສອນຄະຕະຄະນະ**

1) ທວນຄືນຕົວອັກສອນຄະຕະຄະນະ, ອ່ານຕົວອັກສອນທັງໝົດໃນຕາຕະລາງ.
2) ຄູ/NP ໃຊ້ບັດຕົວອັກສອນ ແລະ ອ່ານຕົວອັກສອນແຕ່ລະຕົວໃຫ້ນັກຮຽນຟັງ.
3) ນັກຮຽນຝຶກອ່ານຕົວອັກສອນຕາມບັດຕົວອັກສອນ.
4) ຄູ/NP ນໍາພານັກຮຽນອ່ານຕົວອັກສອນເປັນຄໍາສັບ (ຄູຍົກຮູບໃຫ້ເບິ່ງ).
5) ຄູເວົ້າຕົວອັກສອນເທື່ອລະຕົວ ແລ້ວໃຫ້ນັກຮຽນຝຶກຂຽນກາງອາກາດ.
6) ນັກຮຽນຝຶກຂຽນຕົວອັກສອນໃນປຶ້ມຂຽນ.

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ໃຫ້ນັກຮຽນຊວນໝູ່ໄປເຮັດກິດຈະກໍາໃດໜຶ່ງໃນທ້າຍອາທິດ.
- ການປະຕິເສດການຊັກຊວນ ຈະໃຊ້ສໍານວນແນວໃດ?
- **ວຽກບ້ານ**: ໃຫ້ນັກຮຽນກະກຽມຂໍ້ມູນມາເຮັດປົດສະເຕີ. ໃຫ້ຄິດວ່າຊິເຮັດກິດຈະກໍາຫຍັງ? ເຮັດຢູ່ໃສ? ເຮັດເມື່ອໃດ? ເພື່ອມາເຮັດກິດຈະກໍາໃນຊົ່ວໂມງຕໍ່ໄປ.



ຄັ້ງທີ 3

## かつどう "ສ້າງໂປສະເຕີເພື່ອຊວນໝູ່ເຂົ້າຮ່ວມກິດຈະກໍາ"

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດສ້າງໂປສະເຕີແລ້ວຊັກຊວນໝູ່ເຮັດກິດຈະກໍາໄດ້.

❖ **ທວນຄືນບົດຮຽນຜ່ານມາ**

- ໃຫ້ທວນຄືນບົດຮຽນຜ່ານມາ ໂດຍຖາມຄືນກ່ຽວກັບຮູບຢູ່ໜ້າປົກ.
- ທວນຄືນຄໍາສັບກ່ຽວກັບການຊັກຊວນເຮັດສິ່ງໃດສິ່ງໜຶ່ງຮ່ວມກັນ.

かつどう ກິດຈະກໍາ

ສ້າງໂປສະເຕີເພື່ອຊວນໝູ່ເຂົ້າຮ່ວມກິດຈະກໍາ

① ແບ່ງເປັນກຸ່ມ ກຸ່ມລະ 5-6 ຄົນ ກໍານົດກິດຈະກໍາທີ່ຈະເຮັດ.
② ສ້າງໂປສະເຕີ.
③ ນໍາສະເໜີເພື່ອຊວນໝູ່ເຮັດກິດຈະກໍາ.

まとめ ທວນຄືນ

どこで ごはんを たべますか。
Doko de gohan o tabemasu ka.
レストラン で たべます。
Resutoran de tabemasu.
いっしょに テニスを しませんか。
Isshoni tenisu o shimasen ka.
いいですね。しましょう。
Ii desu ne. Shimashoo.
すみません、テニスはちょっと…。
Sumimasen, tenisu wa chotto...

ຖາມໝູ່: ວັນອາທິດນີ້ຫວ່າງບໍ່? ແລ້ວຊວນໝູ່ເຮັດກິດຈະກໍາໃດໜຶ່ງ

Can-Do Check ★☆☆ ໄດ້ໜ້ອຍໜຶ່ງ ★★☆ ໄດ້ພໍສົມຄວນ ★★★ ໄດ້ດີ

1) ສາມາດຖາມ-ຕອບສິ່ງທີ່ຕົນເອງເຮັດໃນທ້າຍອາທິດວ່າເຮັດຫຍັງ, ຢູ່ໃສ ☆☆☆
2) ສາມາດຊັກຊວນໝູ່ເຮັດກິດຈະກໍາຕ່າງໆໃນທ້າຍອາທິດໄດ້. ☆☆☆
ສິ່ງໃດທີ່ຍັງເຮັດບໍ່ໄດ້ດີ: ____________________

83

❖ **ຂັ້ນຕອນການສອນ**

1) ຈັດແບ່ງກຸ່ມ ກຸ່ມລະປະມານ 5-6 ຄົນ.
2) ນັກຮຽນສົນທະນາກ່ຽວກັບກິດຈະກຳທີ່ຈະຊວນໝູ່ເຮັດ.
3) ອອກແບບໂປສະເຕີ ພ້ອມທັງຄິດຄຳເວົ້າທີ່ຈະຂຽນໃນປິດສະເຕີ

   ຕົວຢ່າງ:

   どようび、ビエンチャンセンターで　ラオスの　おんがくを　ききませんか。

   でんとうてきな　おんがくですよ。

4) ຫຼັງຈາກນັ້ນ, ໃຫ້ແຕ່ລະກຸ່ມອອກມາເວົ້າໃຫ້ໝູ່ຟັງ ພ້ອມກັບປິດສະເຕີ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ຄູເອົາໃຈໃສ່ແນະນຳນັກຮຽນເວລາເຮັດໂປສະເຕີ ໂດຍສະເພາະບໍ່ໃຫ້ໃຊ້ເວລາໃນການແຕ້ມຮູບຫຼາຍ; ໃຫ້ເນັ້ນການຂຽນປະໂຫຍກຊັກຊວນໝູ່ມາເຮັດກິດຈະກຳຮ່ວມກັນ.

❖ **ທົບທວນຄືນບົດຮຽນ**

- ຖາມໝູ່ວ່າ ວັນອາທິດນີ້ຫວ່າງບໍ່? ແລ້ວຊວນໝູ່ເຮັດກິດຈະກຳໃດໜຶ່ງ.

  ຕົວຢ່າງ: A: ～さん、にちようび、ひまですか。

  いっしょに　タラートへ　いきませんか。

  いっしょに　タラートで　かいものを　しませんか。



**Can-Do Check**

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ. ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.

❀ ສິ່ງທີ່ນັກຮຽນມັດທະຍົມມັກເຮັດໃນທ້າຍອາທິດ ❀

⌘ ຂ້າງລຸ່ມນີ້ ແມ່ນຜົນການສຳຫຼວດ ສິ່ງທີ່ນັກຮຽນມັດທະຍົມຍີ່ປຸ່ນ, ຟີລິບປິນ, ໄທ ແລະ ອິນເດຍ ທີ່ມັກເຮັດໃນທ້າຍອາທິດ. ເຈົ້າເດມັກເຮັດຫຍັງໃນທ້າຍອາທິດ? ສິ່ງຄືກັນ ແລະ ຕ່າງກັນແມ່ນຫຍັງ? ຄິດວ່າເປັນຫຍັງຈຶ່ງຕ່າງກັນ?

| にほん ຍີ່ປຸ່ນ (40 ຄົນ) | | |
|---|---|---|
| ອັນດັບ1 | ເຮັດວຽກບ້ານ | (23 ຄົນ) |
| ອັນດັບ2 | ຝຶກກິດຈະກຳສະໂມສອນ (ຊົມລົມ) | (18 ຄົນ) |
| ອັນດັບ3 | ພັກຜ່ອນຢູ່ເຮືອນ | (14 ຄົນ) |
| ອັນດັບ4 | ເບິ່ງວີດີໂອໃນ DVD, Youtube | (13 ຄົນ) |
| ອັນດັບ5 | ອ່ານປຶ້ມ, ນະວະນິຍາຍ | (10 ຄົນ) |
| ອັນດັບ6 | ໄປຊື້ເຄື່ອງ | (8 ຄົນ) |
| ອັນດັບ7 | ເບິ່ງໂທລະພາບ | (7 ຄົນ) |
| ອັນດັບ8 | ຫຼິ້ນກິລາ, ອອກກຳລັງກາຍ, ຫຼິ້ນເກມ | (ຕອບຂໍ້ລະ 6 ຄົນ) |
| ອັນດັບ10 | ຫຼິ້ນອິນເຕີເນັດ | (5 ຄົນ) |

ຄຳຕອບອື່ນໆ: ໄປຫຼິ້ນນຳໝູ່, ຮຽນ, ຍ່າງຫຼິ້ນ, ຂີ່ລົດຖີບຫຼິ້ນ

| フィリピン ຟີລິບປິນ (38 ຄົນ) | | |
|---|---|---|
| ອັນດັບ1 | ຊ່ວຍວຽກເຮືອນ | (24 ຄົນ) |
| ອັນດັບ2 | ເຮັດວຽກບ້ານ | (23 ຄົນ) |
| ອັນດັບ3 | ຫຼິ້ນເກມ | (17 ຄົນ) |
| ອັນດັບ4 | ເບິ່ງນ້ອງ, ຫຼິ້ນອິນເຕີເນັດ | (ຕອບຂໍ້ລະ 11 ຄົນ) |
| ອັນດັບ6 | ເບິ່ງວີດີໂອໃນ DVD, Youtube | (9 ຄົນ) |
| ອັນດັບ7 | ພັກຜ່ອນຢູ່ເຮືອນ, ອ່ານປຶ້ມ, ນະວະນິຍາຍ | (ຕອບຂໍ້ລະ 6 ຄົນ) |
| ອັນດັບ9 | ອ່ານປຶ້ມກາຕູນ | (5 ຄົນ) |
| ອັນດັບ10 | ຫຼິ້ນກິລາ, ອອກກຳລັງກາຍ, ເບິ່ງໂທລະພາບ | (ຕອບຂໍ້ລະ 4 ຄົນ) |

ຄຳຕອບອື່ນໆ: ລ້າງວີດີໂອແລ້ວເອົາລົງອິນເຕີເນັດ

85

| タイ ໄທ (32 ຄົນ) | | |
|---|---|---|
| ອັນດັບ1 | ເຮັດວຽກບ້ານ, ຫຼິ້ນເກມ | (ຕອບຂໍ້ລະ 18 ຄົນ) |
| ອັນດັບ3 | ຫຼິ້ນອິນເຕີເນັດ | (14 ຄົນ) |
| ອັນດັບ4 | ເບິ່ງວີດີໂອໃນ DVD, Youtube | (9 ຄົນ) |
| ອັນດັບ5 | ໄປຮຽນເພີ່ມ, ຫຼິ້ນກິລາ, ອອກກຳລັງກາຍ, ພັກຜ່ອນຢູ່ເຮືອນ | (ຕອບຂໍ້ລະ 6 ຄົນ) |
| ອັນດັບ8 | ຊ່ວຍວຽກເຮືອນ, ໄປເບິ່ງໜັງ, ເບິ່ງໂທລະພາບ | (ຕອບຂໍ້ລະ 4 ຄົນ) |

ຄຳຕອບອື່ນໆ: ລ້າງວີດີໂອແລ້ວເອົາລົງອິນເຕີເນັດ

| インド ອິນເດຍ (59 ຄົນ) | | |
|---|---|---|
| ອັນດັບ1 | ເຮັດວຽກບ້ານ | (30 ຄົນ) |
| ອັນດັບ2 | ຫຼິ້ນກິລາ, ອອກກຳລັງກາຍ | (23 ຄົນ) |
| ອັນດັບ3 | ຫຼິ້ນເກມ | (19 ຄົນ) |
| ອັນດັບ4 | ໄປຊື້ເຄື່ອງ, ເບິ່ງໂທລະພາບ | (ຕອບຂໍ້ລະ 18 ຄົນ) |
| ອັນດັບ6 | ຫຼິ້ນອິນເຕີເນັດ | (16 ຄົນ) |
| ອັນດັບ7 | ພັກຜ່ອນຢູ່ເຮືອນ | (12 ຄົນ) |
| ອັນດັບ8 | ຊ່ວຍວຽກເຮືອນ, ໄປເບິ່ງໜັງ | (ຕອບຂໍ້ລະ 10 ຄົນ) |
| ອັນດັບ10 | ອ່ານປຶ້ມ, ນະວະນິຍາຍ | (8 ຄົນ) |

ຄຳຕອບອື່ນໆ: ໄປຫຼິ້ນນຳໝູ່, ຮຽນ, ຫຼິ້ນຢູ່ສວນສາທາລະນະ

86

## <u>ຄໍລຳ</u> ❀ ສິ່ງທີ່ນັກຮຽນມັດທະຍົມມັກເຮັດໃນທ້າຍອາທິດ ❀

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນໄດ້ເຫັນຄວາມແຕກຕ່າງ ຫຼື ຄວາມຄ້າຍ ຄືກັນກ່ຽວກັບສິ່ງທີ່ນັກຮຽນມັດທະຍົມໃນປະເທດ ອື່ນໆຢາກເຮັດໃນທ້າຍອາທິດ ໂດຍສັງເກດຄຳຕອບທີ່ໜ້າສົນໃຈ ແລະ ຄິດຫາເຫດຜົນ ເປັນຫຍັງຈຶ່ງມີຄຳຕອບແບບນັ້ນ?

1) ຜົນສຳຫຼວດນັກຮຽນຍີ່ປຸ່ນ 40 ຄົນ. ອັນດັບ 1 ແມ່ນ "ເຮັດວຽກບ້ານ", ອັນດັບ 2 ແມ່ນ "ຝຶກກິດຈະກຳໃນສະໂມສອນ(ຊົມລົມ)", ອັນດັບ 3 ແມ່ນ "ພັກຜ່ອນຢູ່ເຮືອນ". ການຫຼິ້ນອິນເຕີເນັດແມ່ນຢູ່ອັນດັບທີ 10 ຊຶ່ງໃຫ້ຮູ້ວ່າ ນັກຮຽນຍີ່ປຸ່ນບໍ່ຄ່ອຍຖືເອົາການຫຼິ້ນອິນເຕີເນັດເປັນສຳຄັນ. ນອກ ຈາກນັ້ນ, ກໍຈະມີຄຳຕອບອື່ນໆ ເຊັ່ນ: ໄປຫຼິ້ນນຳໝູ່, ຮຽນ, ຍ່າງຫຼິ້ນ ເປັນຕົ້ນ.
2) ຜົນສຳຫຼວດນັກຮຽນຟີລິບປິນ 38 ຄົນ. ອັນດັບ 1 ແມ່ນ "ຊ່ວຍວຽກເຮືອນ", ອັນດັບ 2 ແມ່ນ "ເຮັດວຽກບ້ານ", ອັນດັບ 3 ແມ່ນ "ຫຼິ້ນເກມ". ການຫຼິ້ນອິນເຕີເນັດແມ່ນຢູ່ ອັນດັບທີ 4 ເຊິ່ງໃຫ້ຮູ້ວ່າ ນັກຮຽນຟີລິບປິນມັກເບິ່ງອິນເຕີເນັດໃນຍາມຫວ່າງ. ນອກຈາກນັ້ນ, ກໍຈະມີຄຳຕອບອື່ນໆ ເຊັ່ນ: ສ້າງວິດີໂອເພື່ອອັບໂຫຼດລົງອິນເຕີເນັດ.

3) ຜົນສຳຫຼວດນັກຮຽນໄທ 32 ຄົນ. ອັນດັບ 1, 2 ແມ່ນ “ເຮັດວຽກບ້ານ, ຫຼິ້ນເກມ”, ອັນດັບ 3 ແມ່ນ “ຫຼິ້ນອິນເຕີເນັດ”. ການຫຼິ້ນອິນເຕີເນັດແມ່ນຢູ່ ອັນດັບ 3 ຊຶ່ງໃຫ້ຮູ້ວ່ານັກຮຽນໄທນິຍົມການຫຼິ້ນເກມ ແລະ ອິນເຕີເນັດໃນຍາມຫວ່າງ. ນອກຈາກນັ້ນ, ກໍຈະມີຄຳຕອບອື່ນໆ ເຊັ່ນ: ສ້າງວິດີໂອເພື່ອອັບໂຫຼດລົງອິນເຕີເນັດ ຄືກັນກັບຟັງເພງ.
4) ຜົນສຳຫຼວດນັກຮຽນອິນເດຍ 59 ຄົນ. ອັນດັບ 1 ແມ່ນ “ເຮັດວຽກບ້ານ”, ອັນດັບ 2 ແມ່ນ “ຫຼິ້ນກິລາ”, ອັນດັບ 3 ແມ່ນ “ຫຼິ້ນເກມ”. ການຫຼິ້ນອິນເຕີເນັດແມ່ນຢູ່ອັນດັບ 6 ຊຶ່ງໃຫ້ຮູ້ວ່ານັກຮຽນອິນເດຍ ຈັດອັນດັບໃນຍາມຫວ່າງໄດ້ດີ ຄືເຮັດວຽກບ້ານແລ້ວ, ອອກກຳລັງກາຍ ແລະ ພັກຜ່ອນດ້ວຍການຫຼິ້ນເກມ, ເບິ່ງໂທລະພາບ, ຫຼິ້ນອິນເຕີເນັດ ແລະອື່ນໆ....ນອກຈາກນັ້ນ, ກໍຈະມີຄຳຕອບອື່ນໆ ເຊັ່ນ: ອອກໄປຫຼິ້ນຂ້າງນອກ.
5) ສົມທຽບກັບການຈັດອັນດັບຢູ່ໂຮງຮຽນເຮົາ ເປັນແນວໃດ? ມີຫຍັງຄືກັນ ແລະ ແຕກຕ່າງກັນບໍ່? ມີຂໍ້ໃດ ທີ່ຢາກເອົາເປັນແບບຢ່າງ? ຍ້ອນຫຍັງ?



# だい20 か　わたしのまち　(ບ້ານຂອງຂ້ອຍ)



ຄັ້ງທີ 1


だい20か
ບົດທີ 20
わたしのまち
Watashi no machi
ບ້ານຂອງຂ້ອຍ
Can-Do
87

## ໜ້າປົກ

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດອະທິບາຍບ້ານທີ່ຕົນອາໄສຢູ່ວ່າເປັນບ້ານແນວໃດ? ມີຫຍັງແດ່?

❖ **ຂັ້ນຕອນການສອນ**

1) ສົນທະນາກ່ຽວກັບເນື້ອໃນບົດຮຽນດ້ວຍການເບິ່ງຮູບຢູ່ໜ້າປົກ ແລ້ວຈິນຕະນາການເຖິງສະຖານະການ ແລະ ສິ່ງທີ່ຈະໄດ້ຮຽນໃນບົດນີ້.
2) ສົນທະນາກັບນັກຮຽນກ່ຽວກັບສະຖານທີ່ຕ່າງໆໃນຮູບ ແລະ ໃນບ້ານຕົວຈິງ ມີຫຍັງແດ່?
3) ສ້າງຄວາມເຂົ້າໃຈກ່ຽວກັບເນື້ອໃນ Can-Do.
    1. ສາມາດເວົ້າເຖິງບ້ານທີ່ຕົນເອງອາໄສຢູ່ວ່າເປັນບ້ານແນວໃດ
    2. ສາມາດອະທິບາຍໄດ້ວ່າຢູ່ໃນບ້ານນັ້ນມີຫຍັງແດ່

**ຂໍ້ຄວນເອົາໃຈໃສ່ສໍາລັບຄູ**

- ຄູໃຫ້ນັກຮຽນເຂົ້າໃຈຄວາມໝາຍຂອງຄໍາວ່າ “ບ້ານ” ບໍ່ແມ່ນ “ເຮືອນ” .
- ໃນພາສາຍີ່ປຸ່ນຄໍາວ່າ “ບ້ານ” ໝາຍເຖິງບໍລິເວນພື້ນທີ່ໃດໜຶ່ງໃນເມືອງ.




1. ບ້ານຂອງຂ້ອຍແມ່ນບ້ານໃຫຍ່.
ききましょう 65
にぎやか（な） nigiyaka (na)
しずか（な） shizuka (na)
ふるい furui
あたらしい atarashii
おおきい ookii
ちいさい chiisai
べんり（な） benri (na)
ふべん（な） fuben(na)
66

| 1 | 2 | 3 | 4 | 5 |
|---|---|---|---|---|
| | | | | |

そして soshite
はなしましょう
シーホーム shihomu
シーホームは おおきい まちです。
Shihomu wa ookii machi desu.
そして べんりな まちです。
Soshite benri na machi desu.
88

### 1. ບ້ານຂອງຂ້ອຍແມ່ນບ້ານໃຫຍ່

ききましょう **“ຄໍາຄຸນນາມສະແດງເຖິງສະພາບຂອງບ້ານ”**

❖ **ຄາດໝາຍ**:

ໃຫ້ນັກຮຽນເຂົ້າໃຈຄວາມໝາຍຂອງຄໍາຄຸນນາມເພື່ອອະທິບາຍວ່າ ບ້ານນັ້ນເປັນບ້ານແນວໃດ?

❖ **ຂັ້ນຕອນການສອນ**

1) ຄູພານັກຮຽນສົນທະນາກ່ຽວກັບຮູບວ່າ ເປັນສະພາບແນວໃດ?
2) ໃຫ້ນັກຮຽນເບິ່ງຮູບແລ້ວຖາມກ່ຽວກັບຄວາມໝາຍຂອງຄຳສັບພ້ອມທັງຈຸດພິເສດຂອງຕົວອັກສອນທ້າຍຄຳສັບ.

   ① 〜い ຄຳຄຸນນາມ い ② 〜な ຄຳຄຸນນາມ な
3) ຟັງ CD ພ້ອມທັງເບິ່ງຮູບ ທີ່ມີຄວາມໝາຍເປັນຄູ່ ເຊັ່ນ: にぎやかな ແລະ しずかな
4) ຟັງ CD ແລ້ວຖາມກ່ຽວກັບສຽງ ຫຼື ຄຳສັບທີ່ໄດ້ຍິນ.
5) ຟັງ CD ແລ້ວຝຶກເວົ້າອອກສຽງ.
6) ໃຊ້ບັດຮູບຄຳສັບໃຫ້ນັກຮຽນຝຶກເວົ້າຄຳສັບ.
7) ນັກຮຽນຝຶກຫັດເປັນຄູ່: A ເວົ້າເປັນພາສາລາວ, B ເວົ້າເປັນພາສາຍີ່ປຸ່ນ.

   ຕົວຢ່າງ: A: "ຄຶກຄື້ນ" "ມິດງຽບ".

   B: にぎやかな、しずかな
8) ທວນຄືນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄຳສັບດ້ວຍພາສາລາວ.
9) ຟັງ CD ແລ້ວຂຽນຄຳຕອບໃສ່ຕາຕະລາງ. ໃຫ້ຟັງຄຳຄຸນນາມ ແລ້ວຂຽນຄຳຕອບ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ໃຫ້ຄູອະທິບາຍຄຳສັບທີ່ນັກຮຽນເຂົ້າໃຈຍາກ ແລະ ເວລາເຂົ້າບົດຮຽນຄຳສັບໃໝ່ຄວນຍົກເອົາຄຳສັບທີ່ກົງກັນຂ້າມເພື່ອໃຫ້ນັກຮຽນໄດ້ເຂົ້າໃຈງ່າຍຂຶ້ນ ເຊັ່ນ: おおきい ແລະ ちいさい.

| 1 | 2 | 3 | 4 | 5 |
|---|---|---|---|---|
| e. g | c | f. h | b. d | a. e |

ຄຳຕອບໃນ CD

1. わたしのまちは おおきい まちです。そして べんりな まちです。
2. わたしのまちは にぎやかな まちです。とても おおきい まちです。
3. わたしのまちは ちいさい まちです。そして しずかな まちです。
4. わたしのまちは ふるい まちです。そして ふべんな まちです。
5. わたしのまちは あたらしい まちです。にぎやかな まちです。そして とても べんりな まちです。

## はなしましょう **"ອະທິບາຍບ້ານເປັນແນວໃດ?"**

**<u>ຄາດໝາຍ</u>**: ໃຫ້ນັກຮຽນຮູ້ການນຳໃຊ້ ① ～い ຄຳຄຸນນາມ い ②～ な ຄຳຄຸນນາມ な ເພື່ອອະທິບາຍສະພາບຂອງບ້ານ.

1) ຄູເຮັດປະໂຫຍກຕົວຢ່າງໃຫ້ນັກຮຽນເບິ່ງ

<u>ຕົວຢ່າງ</u>: シーホム

シーホムは　おおきい　まちです。

そして　べんりな　まちです。

2) ນັກຮຽນເລືອກ 1 ບ້ານເພື່ອອະທິບາຍດ້ວຍການໃຊ້ ຄຳຄຸນນາມ い, ຄຳຄຸນນາມ な.

3) ຄູອະທິບາຍການນຳໃຊ້ ຄຳຄຸນນາມ い ຄຳຄຸນນາມ な.

- ຄູອະທິບາຍ : ການນຳໃຊ້ "な" + ຄຳນາມ です。

  <u>ຕົວຢ່າງ</u>: にぎやかな　<u>いちば</u>です。

  ຄຳນາມ

- ຖ້າລົງທ້າຍດ້ວຍ "い" ແມ່ນສາມາດຂະຫຍາຍໃຫ້ຄຳນາມໄດ້ເລີຍ.

  <u>ຕົວຢ່າງ</u>: おおきい　<u>いちば</u>です。

  ຄຳນາມ

4) ນັກຮຽນຝຶກເວົ້າເປັນຄູ່ແລ້ວຂຶ້ນນຳສະເໜີໃຫ້ໝູ່ຟັງໃນຫ້ອງ.



**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ຄູອະທິບາຍວິທີຂະຫຍາຍໃຫ້ຄຳນາມລະຫວ່າງ ຄຳຄຸນນາມ い ແລະ ຄຳຄຸນນາມ な.




## かいわ **"ອະທິບາຍບ້ານເປັນແນວໃດ?"**

❖ **<u>ຄາດໝາຍ</u>**

ໃຫ້ນັກຮຽນຮູ້ວິທີແນະນຳບ້ານເປັນແນວໃດດ້ວຍຄຳຄຸນນາມ?

❖ **ຂັ້ນຕອນການສອນ**

1) ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບເລື່ອງຫຍັງ? ຮູບນັ້ນໝາຍເຖິງຫຍັງ?
2) ນັກຮຽນສັງເກດຮູບພາບ ແລະ ຕອບຕາມຄວາມຄິດ.
3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.
4) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ ເຊັ່ນ: ອະທິບາຍກ່ຽວກັບບ້ານຂອງໃຜ? ບ້ານເປັນແນວໃດ? ແມ່ນໃຜຖາມໃຜ?
5) ຟັງ CD ແລ້ວຝຶກອອກສຽງ.
6) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.
7) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ເວລາຖາມສະພາບບ້ານແມ່ນ どんな　まちですか。
- きれい ແມ່ນຄຳຄຸນນາມ な ຊຶ່ງເປັນຄຳພິເສດທີ່ລົງທ້າຍດ້ວຍ い.

はなしましょう **"ອະທິບາຍບ້ານຂອງເຈົ້າເປັນບ້ານແນວໃດ?"**

**ຄາດໝາຍ**: ໃຫ້ນັກຮຽນຮູ້ວິທີການອະທິບາຍບ້ານທີ່ຕົນອາໄສຢູ່ ວ່າເປັນບ້ານແນວໃດ?

**ຂໍ້ຄວນເອົາໃຈໃສ່ສຳລັບຄູສອນ**

- ຄູອະທິບາຍການຂະຫຍາຍຄຳນາມຂອງຄຳຄຸນນາມ い ແລະ ຄຳຄຸນນາມ な.

1) ຄູ ແລະ NP ເຮັດປະໂຫຍກຕົວຢ່າງໃຫ້ນັກຮຽນເບິ່ງ.

<u>ຕົວຢ່າງ</u>:

A: ～さんの　まちは　どんなまちですか。

B: わたしの　まちは　おおきいまちです。
そして　にぎやかなまちです。
とても　きれいなまちですよ。

A: そうですか。いいですね。

2) ນັກຮຽນຝຶກເວົ້າເປັນຄູ່ ແລ້ວຂຶ້ນນຳສະເໜີໃຫ້ໝູ່ຟັງໃນຫ້ອງ.

❖ **ຝຶກອ່ານ ແລະ ຂຽນຕົວອັກສອນຄະຕະຄະນະທັງໝົດ**

1) ທວນຄືນຕົວອັກສອນຄະຕະຄະນະ; ອ່ານຕົວອັກສອນທັງໝົດ.
2) ຫຼິ້ນເກມທວນຄືນຕົວອັກສອນ ເຊັ່ນ: ເກມ "ຄະລິຕະ" ຄູເປັນຜູ້ອ່ານຕົວອັກສອນ ແລ້ວໃຫ້ນັກຮຽນຊອກບັດຕົວອັກສອນນັ້ນ. ຜູ້ໃດຊອກໄດ້ໄວ, ຖືກຕ້ອງ ແລະ ໄດ້ບັດຕົວອັກສອນຫຼາຍກວ່າໝູ່ ຜູ້ນັ້ນຊະນະ.
3) ເກມຕໍ່ຄໍາຕົວອັກສອນໃຫ້ເປັນຄໍາສັບ ເຊັ່ນ: ຄູອ່ານ : "ラオス" ໃຫ້ນັກຮຽນແຕ່ລະກຸ່ມຕໍ່ຄໍາສັບໃຫ້ໄດ້ໄວ ແລະ ຖືກຕ້ອງ.
4) ເກມຂຽນຕົວອັກສອນໃສ່ທາງຫຼັງ. ໃຫ້ນັກຮຽນຢືນເປັນແຖວຍາວ; ຜູ້ຢູ່ຫົວແຖວຈະເປັນຜູ້ເບິ່ງຄໍາສັບນໍາຄູ; ຫຼັງຈາກນັ້ນ, ຂຽນຕົວອັກສອນໃສ່ຫຼັງໝູ່ຕໍ່ໆໄປຈົນເຖິງຜູ້ສຸດທ້າຍ ແລ້ວໄປຂຽນຕົວອັກ ສອນໃສ່ກະດານ. ກຸ່ມໃດຂຽນໄດ້ໄວ ແລະ ຖືກຕ້ອງແມ່ນກຸ່ມນັ້ນຊະນະ.
5) ຂຽນຊື່ ແລະ ນາມສະກຸນຂອງຕົນເອງດ້ວຍຕົວອັກສອນຄະຕະຄະນະ.

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ໃຫ້ນັກຮຽນເວົ້າສະພາບຂອງບ້ານຕົນເອງ ດ້ວຍຄໍາສັບທີ່ຮຽນມາ.
- ວຽກບ້ານ: ໃຫ້ນັກຮຽນທວນຄືນຄໍາສັບກ່ຽວກັບການອະທິບາຍສະຖານທີ່.



ຄັ້ງທີ 2

ききましょう **"ບ້ານຂອງຂ້ອຍມີສວນສາທາລະນະ"**




❖ **ຄາດໝາຍ**

ໃຫ້ນັກຮຽນສາມາດເວົ້າວ່າໃນບ້ານມີຫຍັງແດ່?

❖ **ຂັ້ນຕອນການສອນ**

1) ທວນຄືນຄໍາສັບກ່ຽວກັບຄໍາຄຸນນາມດ້ວຍຮູບ ພ້ອມທັງໃຫ້ນັກຮຽນເວົ້າຄໍາສັບເປັນພາສາຍີ່ປຸ່ນ.
2) ສົນທະນາກ່ຽວກັບຮູບວ່າ ແຕ່ລະຮູບແມ່ນສະຖານທີ່ຫຍັງ? ຢູ່ບ້ານເຮົາມີບໍ່? ຢູ່ໃສແດ່?
3) ສົນທະນານໍາໝູ່ທີ່ນັ່ງທາງຂ້າງວ່າໃນແຕ່ລະຮູບໝາຍເຖິງຫຍັງ?

4) ທົບທວນຄວາມເຂົ້າໃຈກ່ຽວກັບຄວາມໝາຍຂອງຄຳສັບດ້ວຍການຖາມຄືນເປັນພາສາລາວ ຫຼື ໃຫ້ ນັກຮຽນເວົ້າຄຳສັບນັ້ນເປັນພາສາລາວໃຫ້ໝູ່ໃນຫ້ອງຟັງ.
5) ຟັງ CD ແລ້ວຂຽນໝາຍເລກທີ່ຖືກຕ້ອງຕາມບົດສົນທະນາ.
6) ຟັງ CD ເພື່ອລະຂໍ້ວ່າໃນບ້ານນັ້ນ ມີຫຍັງແດ່?
7) ຂຽນຄຳຕອບແລ້ວສົມທຽບກັບໝູ່ທີ່ນັ່ງທາງຂ້າງ.

| 1 | 2 | 3 | 4 | 5 |
|---|---|---|---|---|
| b | e, c | d, a | h, g | f, i |

ຄຳຕອບໃນ CD

1. わたしのまちは おおきい まちです。わたしの まちに ぎんこうが あります。
2. わたしのまちは にぎやかな まちです。みせ と カフェが たくさんあります。
3. わたしのまちに こうえんが あります。そして びょういんも あります。
4. わたしのまちに としょかんと はくぶつかんが あります。わたしのまちは べんりです。
5. わたしのまちに こうばんが あります。バスていも あります。わたしのまちは しずかな まちです。

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ຄູກະກຽມຄຳສັບກ່ຽວກັບສະຖານທີ່ໃນບ້ານ ທີ່ບໍ່ມີໃນບົດຮຽນ ເຊັ່ນ: ガソリンスタンド ປ້ຳນ້ຳມັນ ແລະ ອື່ນໆ...

## はなしましょう **"ໃນບ້ານມີຫຍັງແດ່?"**

**ຄາດໝາຍ**: ໃຫ້ນັກຮຽນຮູ້ເວົ້າວ່າໃນບ້ານມີຫຍັງແດ່? ເປັນສະຖານທີ່ແນວໃດ?

1) ຄູເຮັດປະໂຫຍກຕົວຢ່າງໃຫ້ນັກຮຽນເບິ່ງ.

ຕົວຢ່າງ: おおきい はくぶつかんが あります。

ぎんこうや びょういんが あります。

2) ນັກຮຽນຝຶກເວົ້າເປັນຄູ່ ແລ້ວຂຶ້ນນຳສະເໜີໃຫ້ໝູ່ຟັງໃນຫ້ອງ.




かいわ **"ຖາມ-ຕອບວ່າສະຖານທີ່ໃນບ້ານເປັນ ແນວໃດແດ່?"**

❖ **ຄາດໝາຍ**

ໃຫ້ນັກຮຽນຮູ້ວິທີອະທິບາຍວ່າສະຖານທີ່ໃນບ້ານເປັນແນວໃດ.

❖ **ຂັ້ນຕອນການສອນ**

1) ຖາມກ່ຽວກັບຮູບ ແລະ ສະຖານະການໃນບົດສົນທະນາ ເຊັ່ນ: ຕົວລະຄອນແມ່ນໃຜ? ລົມກັນກ່ຽວກັບຫຍັງ? ແມ່ນໃຜຖາມ? ແມ່ນໃຜອະທິບາຍຫຍັງ?

2) ນັກຮຽນສັງເກດຮູບພາບ ແລະ ຕອບຕາມຄວາມຄິດ.

3) ຟັງ CD ໂດຍບໍ່ໃຫ້ເບິ່ງປຶ້ມ.

4) ຖາມກ່ຽວກັບຄຳສັບທີ່ໄດ້ຍິນ ແລະ ທົບທວນຄວາມເຂົ້າໃຈກ່ຽວກັບເນື້ອໃນບົດສົນທະນາ ເຊັ່ນ: ບ້ານນາງ ນະນະ ມີຫຍັງແດ່? ສະຖານທີ່ນັ້ນເປັນແນວໃດ?

5) ຄູແນະນຳຄຳສັບ ຫຼື ສຳນວນໃໝ່ໃນບົດສົນທະນາ.

- ປະໂຫຍກ ～から ໝາຍເຖິງສາເຫດທີ່ເຮັດໃຫ້ສິ່ງໃດສິ່ງໜຶ່ງເກີດຂຶ້ນ ເຊັ່ນ:
  みせが　ありますから、べんりですよ。
  ຍ້ອນວ່າມີຮ້ານຂາຍເຄື່ອງ ຈຶ່ງສະດວກສະບາຍ.
- いってみたいです。ຢາກໄປລອງເບິ່ງ (ໜ້າສົນໃຈຢາກເຫັນ, ຢາກໄປລອງເບິ່ງ)

6) ຟັງ CD ແລ້ວຝຶກອອກສຽງ.

7) ຝຶກເວົ້າແຕ່ລະປະໂຫຍກ ດ້ວຍການແບ່ງເປັນແຖວ ຫຼື ເປັນຄູ່.

8) ໃຫ້ນັກຮຽນ 2-3 ຄູ່ ລຸກຂຶ້ນເວົ້າ.



はなしましょう **"ເວົ້າເຖິງບ້ານທີ່ເຈົ້າອາໄສຢູ່ມີຫຍັງແດ່?"**

❖ **ຄາດໝາຍ**:

ໃຫ້ນັກຮຽນຮູ້ອະທິບາຍສິ່ງຕ່າງໆທີ່ຢູ່ໃນບ້ານຂອງຕົນເອງ.

1) ຄູຍາຍເຈ້ຍໃຫ້ນັກຮຽນແຕ້ມສິ່ງຕ່າງໆ ຫຼື ສະຖານທີ່ທີ່ຢູ່ໃກ້ບ້ານ.
2) ຖ້າສະຖານທີ່ໃດບໍ່ມີຄຳສັບໃນບົດຮຽນໃຫ້ຖາມຄູ ຫຼື NP.

3) ນັກຮຽນໃດທີ່ບໍ່ຮູ້ວ່າບ້ານຂອງຕົນເອງມີຫຍັງແດ່ ໃຫ້ຈິນຕະນາການບ້ານໃນຝັນ.
4) ຄູເຮັດເປັນຕົວຢ່າງກ່ຽວກັບການອະທິບາຍບ້ານຂອງຕົນ.

ຕົວຢ່າງ: わたしの まちに おおきい ぎんこうが あります。

そして、こうえんは きれいです。

みせ や カフェが ありますから、とても べんりですよ。

5) ນັກຮຽນຝຶກຫັດເປັນຄູ່ໂດຍເອົາຮູບທີ່ຕົນເອງແຕ້ມກ່ຽວກັບບ້ານ ແລ້ວອະທິບາຍເປັນພາສາຍີ່ ປຸ່ນໃຫ້ໝູ່ຟັງ.
6) ໃຫ້ແຕ່ລະຄູ່ລຸກຂຶ້ນເວົ້າໃຫ້ໝູ່ໃນຫ້ອງຟັງ 2-3 ຄູ່.

**ຂໍ້ຄວນເອົາໃຈໃສ່ສຳລັບຄູ**

- ເວລາແຕ້ມຮູບບ້ານ ບໍ່ໃຫ້ນັກຮຽນໃຊ້ເວລາດົນເກີນ 15 ນາທີ; ຖ້ານັກຮຽນແຕ້ມຮູບບໍ່ເປັນກໍໃຫ້ຂຽນຄຳສັບເອົາ ເຊັ່ນ: ぎんこう、としょかん.
- ໃຫ້ນັກຮຽນຮູ້ນຳໃຊ້ປະໂຫຍກ ～から ເພື່ອເວົ້າ ເວລາອະທິບາຍເຫດຜົນ.

☆ **ສະຫຼຸບບົດຮຽນ, ວຽກບ້ານ**

- ຈົ່ງແນະນຳບ້ານທີ່ເຈົ້າອາໄສຢູ່ວ່າເປັນບ້ານແນວໃດ?
- ຈົ່ງສ້າງປະໂຫຍກທີ່ເວົ້າເຖິງເຫດຜົນ "～ から" ເພື່ອອະທິບາຍສະຖານທີ່ ທີ່ມີຊື່ສຽງໃນເມືອງນັ້ນ.
- **ວຽກບ້ານ**: ໃຫ້ນັກຮຽນກະກຽມຮູບພາບປະກອບບ້ານໃນຝັນ ເພື່ອເຮັດກິດຈະກຳໃນຊົ່ວໂມງໜ້າ.



ຄັ້ງທີ 3

かつどう **"ສ້າງໂປສະເຕີແນະນຳບ້ານໃນຝັນ"**

❖ **ຄາດໝາຍ**

ໃຫ້ນັກຮຽນສາມາດອະທິບາຍບ້ານໃນຝັນວ່າ ເປັນສະຖານທີ່ແນວໃດ? ມີຫຍັງແດ່?

❖ **ທວນຄືນບົດຮຽນຜ່ານມາ**

ໃຫ້ທວນຄືນຫົວບົດ ແລະ ເນື້ອໃນຂອງບົດຮຽນນີ້, ທວນຄືນກ່ຽວກັບຄຳສັບ ແລະ ປະໂຫຍກໃນການຖາມ-ຕອບໃນເວົ້າອະທິບາຍສະຖານທີ່ຕ່າງໆຢູ່ໃນບ້ານທີ່ຕົນອາໄສຢູ່.

❖ **ຂັ້ນຕອນການສອນ**

1) ຈັດແບ່ງກຸ່ມໃຫ້ນັກຮຽນເພື່ອສົນທະນາກ່ຽວກັບບ້ານໃນຝັນຂອງກຸ່ມ ໂດຍກະກຽມຮູບພາບ, ຮູບແຕ້ມສ້າງເປັນໂປສະເຕີຂຶ້ນນຳສະເໜີ.
2) ຄູຢາຍເຈ້ຍໃຫ້ແຕ່ລະກຸ່ມ ຫຼັງຈາກນັ້ນ, ໃຫ້ແຕ່ລະກຸ່ມສ້າງໂປສະເຕີ; ໃຊ້ເວລາປະມານ 20 ນາທີ.
3) ໃຫ້ແຕ່ລະກຸ່ມເອົາໂປສະເຕີຂຶ້ນນຳສະເໜີໃຫ້ໝູ່ໃນຫ້ອງຟັງ.

<u>ຕົວຢ່າງ</u>: これは　わたしたちの　まちです。
おおきい　こうえんが　あります。
としょかん　や　こうばんも　あります。
バスていが　ありますから、とても　べんりですよ。
おわります。ありがとうございました。



**<u>ຂໍ້ຄວນເອົາໃຈໃສ່ສຳລັບຄູ</u>**

- ໃຫ້ນັກຮຽນຮູ້ວິທີເວົ້າເວລານຳສະເໜີ ດ້ວຍການເຮັດຕົວຢ່າງການນຳສະເໜີ ຫຼື ຂຽນເປັນຄຳເວົ້າ. ໃຫ້ນັກຮຽນໄດ້ປຸ່ງນຄຳສັບ ແລະ ຝຶກເວົ້າກ່ຽວກັບບ້ານໃນຝັນຂອງກຸ່ມຕົນເອງ.

❖ **ທົບທວນຄືນບົດຮຽນ**

- ທວນຄືນຄຳສັບ ແລະ ສຳນວນທີ່ໃຊ້ໃນບົດນີ້ ເວລາຖາມ-ຕອບ ວ່າໃນບ້ານມີຫຍັງແດ່?

  ～さんの　まちは　どんなまちですか。

  ～さんの　まちに　なにが　ありますか。

  ～は　～まちです。

  ～に　～があります。

  ～が　ありますから、べんりです。

- ໃຫ້ນັກຮຽນ 2-3 ຄູ່ຂຶ້ນອະທິບາຍບ້ານຂອງຕົນເອງວ່າ ມີຫຍັງແດ່? ເປັນແນວໃດ?

**Can-Do Check**

1) ນັກຮຽນທວນຄືນກ່ຽວກັບ Can-Do.
2) ປະເມີນການໃຫ້ດາວຕົນເອງໃນແຕ່ລະຂໍ້.
3) ຄູຢາຍເຈ້ຍ Can-Do Check ໃຫ້ນັກຮຽນໝາຍດາວ ພ້ອມກັບຂຽນສິ່ງທີ່ຍັງເຮັດບໍ່ໄດ້ດີ.

   ຄູໃຫ້ເວລານັກຮຽນ ປະມານ 10-15 ນາທີ ຫຼັງຈາກນັ້ນເກັບຄືນກ່ອນເລີກຮຽນ.




**ຄຳລຳ** ❀ **ສິ່ງທີ່ພົບເຫັນຫຼາຍໃນສະຖານທີ່ຕ່າງໆຂອງຍີ່ປຸ່ນ** ❀

❖ **ຄາດໝາຍ**

ໃຫ້ນັກຮຽນໄດ້ຮຽນຮູ້ສະຖານທີ່ຕ່າງໆຂອງປະເທດຍີ່ປຸ່ນ ແລະ ສາມາດຮູ້ໄດ້ວ່າສິ່ງນັ້ນແມ່ນຫຍັງ? ແລະ ຢູ່ລາວເຮົາມີຄືກັນບໍ່?

❖ **ຂັ້ນຕອນການສອນ**

ໃຫ້ນັກຮຽນສົນທະນາເປັນກຸ່ມກ່ຽວກັບຮູບພາບຕ່າງໆ ວ່າແມ່ນຫຍັງ? ຄືກັນກັບຢູ່ບ້ານເຮົາບໍ່?

1) ຮູບຕູ້ຂາຍເຄື່ອງອັດຕະໂນມັດ (ຕູ້ຢອດຫຼຽນອັດຕະໂນມັດ): ບໍ່ວ່າຢູ່ສະຖານທີ່ໃດໃນປະເທດຍີ່ປຸ່ນກໍສາມາດປ່ອນເງິນ ຫຼື ຢອດຫຼຽນຊື້ນໍ້າໄດ້. ໃນຕູ້ມີທັງເຄື່ອງດື່ມຮ້ອນ ແລະ ເຄື່ອງດື່ມເຢັນ ລາຄາປະມານ 100-160 ເຢນ ຕໍ່ປ໋ອງ (ຍົກເວັ້ນປະເພດເຫຼົ້າ, ເບຍ). ໃນຕູ້ຈະມີເຄື່ອງດື່ມເກືອບທຸກຊະນິດໄວ້ໃຫ້ໄດ້ເລືອກ. ເວລາຕ້ອງການດື່ມ ນໍ້າ ຈະຕ້ອງຢອດຫຼຽນ ຫຼື ບາງຕູ້ກໍສາມາດໃຊ້ເງິນເປັນໃບໄດ້ ເວລາປ່ອນເງິນເຂົ້າໄປ ປຸ່ມກົດຈະມີໄຟສີຮຸ່ງຂຶ້ນ ຊຶ່ງໝາຍຄວາມວ່າເຮົາສາມາດເລືອກເຄື່ອງດື່ມຕາມໃຈມັກ ແລະ ຫຼັງຈາກກົດແລ້ວ ປ໋ອງນໍ້າກໍຈະຕົກລົງມາ ພ້ອມເງິນທອນ. ນອກຈາກເຄື່ອງດື່ມແລ້ວ, ຍັງມີຫຼາຍຢ່າງທີ່ຂາຍໃນຕູ້ຂາຍເຄື່ອງອັດຕະໂນມັດນີ້ ເຊັ່ນ: ເຂົ້າໜົມ, ເຄື່ອງນຸ່ງ ຫຼື ເຄື່ອງໃຊ້ຈຳເປັນຕ່າງໆ.

2) ຮູບຕູ້ໄປສະນີ: ເຮົາສາມາດສົ່ງຈົດໝາຍ ຫຼື ເອກະສານຕ່າງໆໂດຍໄປຊື້ສະແຕມຢູ່ຫ້ອງການໄປສະນີ ຫຼື ຢູ່ຮ້ານສະດວກຊື້ ແລ້ວຕິດໃສ່ຊອງ ຫຼັງຈາກນັ້ນ, ກໍປ່ອນລົງຕູ້ນີ້. ຢູ່ລາວມີບໍ່? ຕູ້ສີຫຍັງ? ມີໃຜເຄີຍເຫັນບໍ່?

3) ຮູບວັດ ແລະ ທາງເຂົ້າສານເຈົ້າ: ຢູ່ຍີ່ປຸ່ນຈະມີທັງວັດ ແລະ ສານເຈົ້າ ເພື່ອໃຫ້ປະຊາຊົນຜູ້ນັບຖືເຂົ້າໄປໄຫວ້ຂໍພອນໃນວັນຂຶ້ນປີໃໝ່ ຫຼື ເປັນແຫຼ່ງທ່ອງທ່ຽວທາງສິລະປະວັດທະນະທຳທີ່ເປັນເອກະລັກຂອງປະເທດຍີ່ປຸ່ນອີກດ້ວຍ.

4) ຮູບຮ້ານສະດວກຊື້: ຢູ່ຍີ່ປຸ່ນສ່ວນຫຼາຍຈະເປີດຕະຫຼອດ 24 ຊົ່ວໂມງ. ໃນຮ້ານຈະມີອຸປະກອນຫຼືເຄື່ອງໃຊ້ຈຳເປັນ ແລະ ອາຫານການກິນ ລວມທັງເຄື່ອງດື່ມທຸກຊະນິດຊຶ່ງອຳນວຍຄວາມສະດວກ ໃຫ້ແກ່ປະຊາຊົນໄດ້ເປັນຢ່າງດີ. ນອກຈາກນັ້ນ, ຍັງມີບໍລິການອື່ນໆທີ່ອຳນວຍຄວາມສະດວກໃຫ້ແກ່ປະຊາຊົນ ເຊັ່ນ: ບໍລິການຈ່າຍຄ່ານໍ້າ, ຄ່າໄຟ ແລະ ສົ່ງຈົດໝາຍ, ເຄື່ອງພັດສະດຸອື່ນໆອີກດ້ວຍ.

5) ມີສິ່ງໃດທີ່ຄືກັນກັບຢູ່ບ້ານເຮົາບໍ່? ຢາກໃຫ້ບ້ານເຮົາມີສິ່ງໃດຄືກັນກັບຢູ່ຍີ່ປຸ່ນ?, ຍ້ອນຫຍັງ?

✿❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀❀✿

ປື້ມແບບຮຽນເຫຼັ້ມນີ້ໄດ້ນຳໃຊ້ຮູບຈຳນວນໜຶ່ງຈາກຄັງຮູບພາບສື່ການສອນໃນເວັບໄຊ " minna no kyozai site"（http://minnanokyozai.jp） ສ້າງໂດຍສູນພາສາຍີ່ປຸ່ນປະຈຳມູນນິທິຍີ່ປຸ່ນ.

この教材は、国際交流基金日本語国際センターが作った「みんなの教材サイト（http://minnanokyozai.jp）」の教材用写真素材から一部を転載して作りました。